# "ກິນ"

ໂດຍ: ທ່ານພຣະອາຈາຣຍ໌ຊັຍຍະ ຊຍສຸໂຕ

**Chaiya Meditation Monastery**

*7925 Virtue Court*
*Las Vegas, NV 89113*
*Tel: (702) 456-3838*
*Website: WWW.chaiyacmm.org*
*Email: chaiya@chaiyacmm.org*

# "ກິນ"

**ໂດຍ**: ທ່ານພຣະອາຈາຣຍ໌ ຊັຍຍະ  ຊຍສຸໂຕ

# ວັດຊັຍຍະສັມມວິຫາຣ

**Chaiya Meditation Monastery**

໗໙໒໕ Virtue Court

Las Vegas, Nevada ໘໙໑໑໓

**Tel**: (໗໐໒) ໔໕໖-໓໘໓໘

**Cell**: (໗໐໒) ໒໑໙-໐໓໗໗

**Website:** WWW.chaiyacmm.org

**Email:** chaiya@chaiyacmm.org

**ພິມພ໌ເທື່ອທີ່ ໑** ຖວາຍທ່ານພຣະອາຈາຣຍ໌ ຊັຍຍະ ຊຍສຸໂຕ

ເນື່ອງໃນວັນອອກພຣຣສາ ໑໖ ຕຸລາຄົມ ພ.ສ. ໒໕໕໙ ຈຳນວນ ໖໐໐ ຫົວ

**ພິສູຈນ໌ອັກສຣໂດຍ:** **ທ່ານພຣະອາຈາຣຍ໌** ຊັຍຍະ ຊຍສຸໂຕ

**ແມ່ຊີ** ເນສາວີ, **ແມ່ຊີ** ປັທມາວດີ ວໍຣຣິນມານ

**ຄຸຕ** ຄນຶງນິຈ ໄທຍດຳຣົງເດຊ

**ພິມພ໌ທີ່ໂຮງພິມພ໌**

## American Press

๓๖๗๕ W. Gettysburg. # ๑๐๒

Fresno, California ๙๓๗๒๒

Tel:

Office: ๕๕๙-๒๗๑-๐๒๙๐

Fax: ๕๕๙-๒๗๑-๐๓๙๐

Email: americanpress@sbcglobal.net

**" ສັພພທານັງ ສັມມທານັງ ຊິນາຕິ ສັພພຣສັງ ສັມມຣໂສ ຊິນາຕິ ສັພພຣຕິງ ສັມມຣຕີ ຊິນາ**

**ຕິ ຕັຕຫັກຂໂຍ ສັພພທຸກຂັງ ຊິນາຕິ "**

" ການໃຫ້ສັມມະທານ ຊນະການໃຫ້ທັ້ງປວງ

ຣົສແຫ່ງສັມມ໌ ຊນະຣົສທັ້ງປວງ

ຄວາມຍິນດີໃນສັມມ໌ ຊນະຄວາມຍິນດີທັ້ງປວງ

ຄວາມສິ້ນໄປແຫ່ງຕັຕຫາ ຊນະທຸກຂ໌ທັ້ງປວງ "

# ຄຳນຳ

ປື້ມ"**ກຖິນ**" ເຫຼັ້ມນີ້ ເປັນສັນມເທສນາໂດຍ **ທ່ານພຣະອາຈາຣຍ໌ຊັຍຍະ ຊຍສຸໂຕ** ທ່ານໄດ້ມີເມຕຕາສແດງສັນມ໌ເອົາໄວ້ເມື່ອ ໔ ປີທີ່ຜ່ານມາ ເມື່ອອອກພັຣຊາປີທີ່ແລ້ວ ທ່ານພຣະອາຈາຣຍ໌ປຣາຣົກວ່າ ມີຄວາມປັຕຖນາຢາກຈະໃຫ້ຍາຕິໂຍມໄດ້ເຂົ້າໃຈເຣື່ອງຂອງການທອດກຖິນ ຢາກໃຫ້ຂນ້ອຍນຳສັນມະທີ່ທ່ານພຣະອາຈາຣຍ໌ໄດ້ສແດງໄວ້ມາຂຽນໃຫ້ເປັນປື້ມອ່ານກັນ ເພື່ອຈະໄດ້ທຳຄວາມເຂົ້າໃຈໃນຫລາຍແງ່ຫລາຍມຸມ ໂດຍສະເພາະອານິສົງສ໌ຂອງການຖວາຍຜ້າກຖິນ ຈະໄດ້ເຂົ້າໃຈວ່າກຖິນຄືຫຍັງ? ມູລເຫຕຸຂອງກຖິນມີຄວາມເປັນມາແນວໃດ? ກຖິນມີຈັກປະເພທ? ແລ້ວການກຳຫນົດເທສກາລກຖິນເຮັດໄດ້ຍາມໃດ? ຈະຈອງກຖິນໄດ້ແນວໃດ? ທອດກຖິນເຂົາເຮັດກັນແນວໃດ? ມີອານິສົງສ໌ແນວໃດສຳຫຼັບພຣະພິກຂຸສົງຄ໌ ແລະມີອານິສົງສ໌ແນວໃດສຳຫຼັບຍາຕິໂຍມທີໄດ້ເຮັດການຖວາຍຜ້າກຖິນ ຍາຕິໂຍມຈະໄດ້ເຂົ້າໃຈຄຳວ່າ "**ກຣານກຖິນ**" ເປັນຕົ້ນ ສ່ວນອົງຄ໌ປະກອບຕ່າງ ໆ ທີ່ຂນ້ອຍເຫັນວ່າຄວຣນຳມາເພີ່ມເຕີມໃນຫນັງສືເຫຼັ້ມນີ້ໃຫ້ຖືກຕ້ອງໃຫ້ສົມບູຣຕ໌ເທົ່າທີ່ຈະສົມບູຣຕ໌ໄດ້ ໂດຍນຳເອົາພຣະສູຕຣ໌ພຣະວິນັຍຈາກພຣະໄຕຣປິຜົກທີ່ກ່ຽວຂ້ອງກັບກຖິນ ມາສແດງໄວ້ໃນຫນັງສືເຫຼັ້ມນີ້ດ້ວຍ ເພື່ອຍາຕິໂຍມຈະໄດ້ນຳໄປປະພຶຕປຜິບັຕິ ໃຫ້ຖືກຕ້ອງຕາມແນວພຣະພຸທສສາສນາແບບເຖຣວາທ ທີ່ທ່ານພຣະອາຈາຣຍ໌ໄດ້ມີວັຕຖຸປະສົງຄ໌ຢາກໃຫ້ພວກເຮົາຍາຕິໂຍມໄດ້ເຂົ້າໃຈກ່ຽວກັບກຖິນວ່າ:...

ຄຳວ່າ **ກຖິນ** ຕາມສັພທ໌ແປລວ່າ **ໄມ້ສະດຶງ** ຄືໄມ້ແບບສຳຫຼັບຂຶງເພື່ອຕັດຍິບຈີວຣ

# ຄຳນຳ

**ກະຖິນ** ໝາຍເຖິງຜ້າພິເສດທີ່ພຣະພຸທທເຈົ້າຊົງອະນຸຍາດແກ່ພິກຂຸສົງທີ່ ຈຳພັນສາຄົບສາມເດືອນແລ້ວ ຕາມຫລັກເກນ ແລະເງື່ອນໄຂຕ່າງໆ ທີ່ກຳໜົດ

**ກະຖິນ** ເປັນປະເພນີທີ່ກ່ຽວຂ້ອງກັບພຸທທບັນຍັດ ຊຶ່ງຈະຕ້ອງປະຕິບັດຕາມພຸທທານຸຍາດ **ຫ້າ-ນຶ່ງ** ຢ່າງເຄັ່ງຄັດ ຄື **ນຶ່ງປີ ນຶ່ງເດືອນ ນຶ່ງວັດ ນຶ່ງເທື່ອ ນຶ່ງເຈົ້າພາບ**

໑ **ນຶ່ງປີ** ຄື ປີນຶ່ງທອດກະຖິນກັນເທື່ອນຶ່ງ

໒ **ນຶ່ງເດືອນ** ຄື ຊ່ວງເວລາທີ່ຈະທອດກະຖິນໄດ້ມີພຽງເດືອນດຽວ ຄືຕັ້ງແຕ່ແຮມ ໑ ຄ່ຳ ເດືອນ ໑໑ ເຖິງຂຶ້ນ ໑໕ ຄ່ຳ ເດືອນ ໑໒

໓ **ນຶ່ງວັດ** ຄື ພຣະທີ່ຈະຮັບກະຖິນຕ້ອງເປັນພຣະທີ່ຈຳພັນສາຢູ່ໃນວັດດຽວກັນ ມີຈຳນວນບໍ່ນ້ອຍກວ່າ ໕ (ຫ້າ) ອົງ ນ້ອຍກວ່ານີ້ຮັບກະຖິນບໍ່ໄດ້ ໄປນິມົນຕ໌ຈາກວັດອື່ນມາໃຫ້ຄົບ ກໍໃຊ້ບໍ່ໄດ້

໔ **ນຶ່ງເທື່ອ** ຄື ວັດນຶ່ງທອດກະຖິນຮັບກະຖິນໄດ້ເທື່ອດຽວ ໃນຮອບປີ

໕ **ນຶ່ງເຈົ້າພາບ** ຄື ເຈົ້າພາບກະຖິນມີໄດ້ພຽງຄອບຄົວດຽວ ເມື່ອຄອບຄົວນຶ່ງທອດແລ້ວ ຄອບຄົວອື່ນໆ ບໍ່ມີສິທທິ໌ມາທອດອີກ

ພຸທທານຸຍາດສຳຄັນອີກຂໍ້ນຶ່ງຄື ພຣະສົງຈະທ່ຽວບອກບຸນໃຫ້ຍາດຕິໂຍມໄປເປັນເຈົ້າພາບທອດກະຖິນທີ່ວັດຂອງຕົນບໍ່ໄດ້ ບໍ່ວ່າຈະບອກດ້ວຍວາຈາ ຈົດໝາຍ ຫຼືດ້ວຍວິທີການໃດໆ ກໍຕາມ ເຮັດຊັ່ນນັ້ນຜິດພຸທທບັນຍັດ

# ຄຳນຳ

ພຸທສານຸລາຕຂອງກາກິນເປັນພຸທສບັລລັຕິ ຄືເປັນກົຜກຕິກາຂອງພຣະພຸທສເຈົ້າ ຄວຣສຶກສາພຸທສານຸລາຕດັ່ງກ່າວນີ້ໃຫ້ຊັດເຈນແລ້ວຈຶ່ງທຳ ພຣະສັມມວິນັຍທີ່ພຣະພຸທສອົງຄ໌ໄດ້ຊົງບັລລັຕິໄວ້ ພວກເຮົາຊາວພຸທສທັ້ງພຣະສົງຄ໌ແລະຍາຕິໂຍມຄວຣສຶກສາແລ້ວນຳມາປຜິບັຕິ ເພື່ອຈັຣໂລງພຣະພຸທສສາສນາໃຫ້ຍືນຍາວຖືກຕ້ອງດີງາມຕລອດໄປໆ

ໄພຫູຣຍ໌ ອິນທວົງສ໌

໑໔ ກໍຣກຜາຄົມ ໔໕໕໙

ເມືອງເຟຣສໂນ່, ຣັຖແຄລີຟໍຣ໌ເນັຽ

# ປະວັຕິໂດຍຫຍໍ້ຂອງ

## ທ່ານພຣະອາຈາຣຍ໌ຊັຍຍະ ຊຸຍສຸໂຕ

ທ່ານພຣະອາຈາຣຍ໌ຊັຍຍະ ຊຸຍສຸໂຕ ເກີດເມື່ອວັນອັງຄາຣທີ່ ໒໕ ມີນາຄົມ ຄ.ສ. ໑໙໔໗ ທີ່ ອຳເກີສີເປາະ ຣັກຊານ ປະເທສພມ່າ ປີ ຄ.ສ. ໑໙໖໕ ໄດ້ບວຊເປັນສາມເນຣ ແລະອຸປສົມບົທເປັນພຣະກິກຂຸສົງຄ໌ ປີ ຄ.ສ. ໑໙໖໗ ສຳເຣັຈການສຶກສາສັມມາຈຣິຍະຊັ້ນສູງສຸດເມື່ອ ປີ ຄ.ສ. ໑໙໗໗ ຫລັງຈາກນັ້ນໄດ້ສອນພຣະສົງຄ໌ສາມເນຣເປັນເວລາ ໑໖ ປີ



ຕັ້ງແຕ່ ຄ.ສ. ໑໙໗໖ ທ່ານໄດ້ເລີ້ມປຜິບັຕິສັມມ໌ ຕາມສຳນັກຕ່າງໆ ບໍ່ຕ່ຳກວ່າ ໕ ສຳນັກ ຕົ້ນປີ ຄ.ສ. ໑໙໘໘ ທ່ານໄດ້ເດີນທາງເຂົ້າສູ່ປະເທສໄທຍ ໂດຍໄດ້ຮັບນິມົນຕ໌ຈາກ ຫລວງ ພໍ່ພຣະຄຣູ ວຊີຣ ຈິຕໂສກິຕ ທ່ານເຈົ້າອາວາສວັດ ເຂົາຕະເຄຣົາ ຊຶ່ງເປັນເຈົ້າຄຕະອຳເກີ ບ້ານແຫລມ ຈັງຫວັດເພັຊຣ໌ບຸຣີ ທ່ານໄດ້ສຶກສາກາສາໄທຍໂດຍໃຊ້ເວລາ ໕ ເດືອນເທົ່ານັ້ນກໍສາມາຖເວົ້າອ່ານແລະຂຽນໄດ້ເປັນຢ່າງດີ ແລ້ວໄດ້ມີໂອກາສສອນພຣະອກິສັມມ໌ໃຫ້ແກ່ພຣະສົງຄ໌ ແລະແມ່ຊີໃນວັດເປັນເວລາ ໖

ເດືອນເຕັມ ຮວມເວລາທີ່ພຳນັກໃນປະເທສໄທຍປະມາຓ ໑ ປີຈາກນັ້ນ ປີ ຄ.ສ. ໑໙໙໐ ເດີນທາງໄປ ປະເທສສຣີລັງກາເພື່ອການສຶກສາ ແລະພຳນັກຢູ່ທີ່ນັ້ນປະມາຓ ໔ ປີ



ປາຍ ປີ ຄ.ສ. ໑໙໙໐ ເດີນທາງມາປະເທສສຫຣັຖອເມຣິກາ ພຳນັກຢູ່ທີ່ວັດພຸທສກາວນາ ເມືອງລາສເວກັສ ຣັຖເນວາດາ ດ້ວຍຄວາມປະສົງຄ໌ຂອງພຣະຄຣູໃບຝີກາ ຫລວງຕາຈອງ ປັຍຍາວໂຣ ທ່ານເຈົ້າອາວາສ ແລະການຂໍຮ້ອງຂອງທ່ານຜູ້ທີ່ສົນໃຈສົມນ໌ ທ່ານຈຶ່ງໄດ້ເລີ້ມການສອນການການຈເຣີນວິປັສສນາກາວນາ ແລະສອນກ່ຽວກັບພຣະພຸທສສາສນາ ຂຓະດຽວກັນກໍໄດ້ສຶກສາເພີ່ມເຕີມຈົນຈົບການສຶກສາຈາກວິທຍາລັຍໄປດ້ວຍ ຫລັງຈາກທ່ານເຈົ້າອາວາສຫລວງຕາຈອງ ມໍຣຕກາພໄປ ເມື່ອ ປີ ຄ.ສ. ໑໙໙໔ ທ່ານໄດ້ຮັບເລືອກຕັ້ງໃຫ້ເປັນເຈົ້າອາວາສສືບຕໍ່ມາເປັນເວລາ ໖ ປີ ເມື່ອປີ ຄ.ສ. ໑໙໙໕

ເພື່ອອອກແສວງຫາຄວາມວິເວກ ຈະໄດ້ປະຕິບັດສັມມ໌ເຕັມທີ່ ຕາມທີ່ໄດ້ຕັ້ງໃຈປັຕຖນາໄວ້ເປັນເວລາຫລາຍປີ ຈຶ່ງໄດ້ພຳນັກປະຕິບັດສັມມ໌ຢູ່ທີ່ໃນເມືອງລາສເວກັສທີ່ວັດຊັຍຍະສັມມະວິຫາຣຈົນເຖິງທຸກມື້ນີ້

ຕັ້ງແຕ່ ປີ ຄ.ສ. ໑໙໙໑ ຈົນເຖິງ ປີ ຄ.ສ. ໒໐໑໕ ສັມມຕ່າງໆ ທີ່ທ່ານໄດ້ສແດງ ໄດ້ຖືກອັດເທປອັດ CD ໄວ້ເປັນພາສາລາວ ພາສາພມ່າ ແລະພາສາອັງກລິຊ ມີເຖິງປະມາຕ ໑, ໗໐໐ ຕລັບ ທາງວັດໄດ້ອັດແຈກເປັນສັມມະທານໄປແລ້ວຫລາຍຫມື່ນຕລັບ ແລະສັມມ໌ທີ່ທ່ານໄດ້ສແດງໄວ້ໄດ້ຈັດພິມພ໌ເປັນປຶ້ມຮວມທັ້ງຫມົດ ໑໑ ເຫຼັ້ມ ຮ່ວມທັ້ງທ່ານພຣະອາຈາຣຍ໌ໄດ້ອັດບັນທຶກໃນຮູບແບບ YouTube ອີກຫຼວງຫຼາຍ ທ່ານໄດ້ສແດງສັມມ໌ສອນວິປັສສນາກາວນາໃຫ້ແກ່ຍາຕິໂຍມຮັຖຕ່າງໆ ຫລາຍຮັຖ ໃນສຫຣັຖອເມຣິກາ ແຄນາດາ ແລະຢຸໂຣປດ້ວຍໆ

ສຣຸປແລ້ວ ນັບຕັ້ງແຕ່ບວຊຮຽນ ທ່ານໄດ້ສຶກສາແລະປະຕິບັດສັມມ໌ ແນະນຳພຣະສັມມ໌ຄຳສອນເຜີຍແຜ່ພຣະພຸທສາສນາໃຫ້ແກ່ຊາວພຸທສ ແລະຄົນຕ່າງສາສນາທຸກມື້ ຮ່ວມທັ້ງສ້າງພຸທສະສຖານ ອາທິເຊັ່ນ ໂບສຖ໌ ວິຫາຣ ພຣະມຫາເຈດີຍ໌ຊເວດາກອງ ເປັນຕົ້ນ ທ່ານໃຊ້ເວລາໃຫ້ເປັນບຸຍບາຣມີສຳຫຼັບຕົວທ່ານເອງ ແລະເພື່ອໃຫ້ເປັນເນື້ອນາ

ບຸນທີ່ດີໃຫ້ແກ່ຍາຕິໂຍມທີ່ອຸປະຖາກຮັບໃຊ້ແລະຊ່ວຍວັດວາສາສນາ ສັ່ງສອນອົບຮົມ



ຍາຕິໂຍມທັ້ງທາງໂລກ ແລະທາງສັມມ໌ໃຫ້ແກ່ພຸທສສາສນິກຊົນທັ້ງຫລາຍ ຕລອດເຖິງຄຸນປະໂຍຊນ໌ໃຫ້ພຣະພຸທສສາສນາຢ່າງຫຼວງຫຼາຍມຫາສາລແທ້ໆ ຈຶ່ງຂໍຮ່ວມອນຸໂມທນາໃນກຸສົລກັມມ໌ທີ່ທ່ານພຣະອາຈາຣຍ໌ໄດ້ກະທຳມາ ໓ ທີ່ນີ້ດ້ວຍ

ໄພຫູຣຍ໌ ອິນທວົງສ໌

໑໔ ກຣກະດາຄົມ ໒໕໕໙

ເມືອງເຟຣສໂນ່, ຣັຖແຄລີຟໍຣ໌ເນັຽ

# ສາຣບັຌ



## ຫມວດປກິຓກະ ທັມມະອາຈາກຖິນ

# ອັຖກະຖາ ມຫາວັຄຄ໌ ພາຄ ໔

# ກະຖິນຂັນສກະ ຈາກພຣະວິນັຍປິຜົກ ມຫາວັຄຄ໌ ເຫຼັ້ມ ໕ ພາຄ ໔

# ເຣື່ອງ "ກຖິນ"

ເຈຣີນສຸຂສວັສດີບັຣດາຍາຕິໂຍມສາທຸຊົນທຸກໆ ທ່ານ ວັນນີ້ວັນເສາຣ໌ ວັນທີ່ ໑໘ ເດືອນຕຸລາຄົມ ຄຣິສຕ໌ສັກຣາຊ ໒໐໑໔ ເປັນວັນທີ່ເຮົາຈລອງກອງກຖິນ ເຮົາຈະໄດ້ ທອດກຖິນມື້ອື່ນນີ້ ປີນີ້ເຈົ້າພາບໃຫຍ່ປະສານກຖິນ ກໍຄືຄຸນຍາຍແປັດແລະລູກໆ ຫລານໆ ທີ່ເດີນທາງມາຈາກແຄລີຟໍຣ໌ເນັຽ "ລອສແອນເຈລີສ" ບ້ານເດີມກໍມາຈາກຂເມຣ ສຳຫລັບວັນນີ້ຢາກຈະສແດງກ່ຽວກັບ**ກຖິນ**[1] ເປັນຫຍັງເຮົາເຖິງເອີ້ນວ່າກຖິນ? ກຖິນໝາຍຄວາມວ່າ ແນວໃດ? ນີ້ຄືຂໍ້ທີ່ ໑

ຂໍ້ທີ່ ໒ ທອດກຖິນ? ເຖິງເວລາກ່າວຄຳຖວາຍຜ້າກຖິນ ເຈົ້າພາບຈະກ່າວວ່າ "**ກະຖີນັງ, ອັຕຖະຣະຕຸ**" "**ກະຖີນັງ**" ກໍຄືກຖິນນັ້ນແຫລະ "**ອັຕຖະຣະຕຸ**" ກໍຄືຈົງກຣານກຖິນ ທີ່ນີ້ພາສາບາລີຄຳວ່າ "**ອັຕຖະຣະ**" ແປລວ່າແນວໃດ? ກຣານຄືຫຍັງ?

ຂໍ້ທີ່ ໓ ທີ່ເລີ້ມທອດກຖິນຕັ້ງແຕ່ຍາມໃດ? ວິທີທອດເລີ້ມຈາກຫຍັງ? ເພາະຫຍັງ ເປັນຫຍັງຕ້ອງທອດກຖິນ?

---

1 ***ກຖິນ*** ຊື່ເອີ້ນຜ້າໄຕຣຈີວຣທີ່ພຣະພຸທສເຈົ້າຊົງອນຸຍາຕໃຫ້ພິກຂຸຜູ້ຢູ່ຈຳພັຣສາ ໓ ເດືອນແລ້ວ ສາມາຖຮັບມານຸ່ງຫົ່ມໄດ້ ໂດຍຄຳວ່າການທອດກຖິນ ຫຼືການກຣານກຖິນ ຈັດເປັນສັງຄະກັມມ໌ປະເພທນຶ່ງ ຕາມພຣະວິນັຍບັນຍັຕິເຖຣວາທທີ່ມີກຳໜົດເວລາ

ຂໍ້ທີ່ ໔ ເມື່ອທອດກຖິນໄປແລ້ວມີປະໂຍຊນ໌ຫຍັງແດ່ສຳຫຼັບພຣະສົງฆ໌? ແລະມີປະໂຍຊນ໌ຫຍັງແດ່ສຳຫຼັບເຈົ້າກາພທັ້ງຫລາຍທີ່ເປັນເຈົ້າພາພຕົ້ນກຖິນ ແລະເຈົ້າກາພບໍຣິວາຣຜ້າກຖິນ?

ຂໍ້ທີ່ ໕ ຈະເວົ້າເຖິງການຖວາຍຜ້າກຖິນນີ້ພຣະພຸທຂເຈົ້າຍົກຍ່ອງສັຣເສີນວ່າເປັນການທີ່ຖວາຍຜ້າທີ່ປະເສີຖ ເປັນຫຍັງທ່ານເຖິງວ່າການທີ່ຖວາຍຜ້າກຖິນຈຶ່ງເປັນການຖວາຍຜ້າທີ່ປະເສີຖ? ຈຶ່ງໄດ້ຖືເປັນປະເພຕີມາເທົ່າເຖິງທຸກມື້ນີ້ ຈະໄດ້ອະທິບາຍຕໍ່ໄປ

ເລີ້ມຕົ້ນກ່ອນຈະເວົ້າເຖິງເຣື່ອງກຖິນ ຄຳວ່າກຖິນບໍ່ແມ່ນພາສາລາວເປັນພາສາບາລີມາຈາກ ຄຳວ່າ "**ກຖິນ**" (ກະຖິນະ) ໃນທີ່ນີ້ຖ້າຈະເບິ່ງໃນພຈນານຸກຣົມເພື່ອຈະເບິ່ງຄວາມຫມາຍຢ່າງແນ່ນອນ ເພື່ອຈະໃຫ້ຊັດເຈນຈະເບິ່ງພຈນານຸກຣົມໃຫ້ລະອຽດ ຈະຫາເບິ່ງໄດ້ທັ້ງໃນພາສາລາວຫຼືພາສາອັງກລິຊ ຄຳວ່າ "**ກຖິນ**" ຫມາຍເຖິງ "**ໄມ້ສະດຶງ**" ຫຼືອີກຄວາມຫມາຍນຶ່ງເອີ້ນວ່າ "**ແນ່ນຫນາມັ່ນຄົງ**" ຈຳໄວ້ເດີ້ ຫນາແນ່ນມັ່ນຄົງນີ້ທ່ານທັ້ງຫລາຍກໍໄດ້ຮູ້ວ່າ ບໍ່ວ່າຈະເປັນພາສາອັງກລິຊຫຼືພາສາລາວ ຄຳນຶ່ງອາຈຈະມີຄວາມຫມາຍເຖິງ ໔-໖ ຄວາມຫມາຍນັ່ນແຫລະ ແລ້ວແຕ່ປະໂຍຄທີ່ເຮົາໃຊ້ ແຕ່ໃນກໍຣະນີນີ້ ກຖິນຄືໄມ້ສະດຶງແມ່ນບໍ່? ໄມ້ສະດຶງເປັນໄມ້ຊນິດນຶ່ງ ແລະອີກຂໍ້ນຶ່ງກໍຄືແນ່ນຫນາມັ່ນຄົງຜ້າທີ່ເຮົາໄດ້ຖວາຍນີ້ແນ່ນຫນາມັ່ນຄົງເພາະຫຍັງ? ແນ່ນຫນາແນວໃດ? ມັ່ນຄົງແນວໃດ? ໃນທີ່ນີ້ເຮົາຈະບໍ່ໃຊ້ຄຳວ່າຜ້າສະດຶງ ເຮົາເອົາຄວາມຫມາຍທີ່ວ່າເປັນຜ້າກຖິນ ຜ້າທີ່ແນ່ນຫນາມັ່ນຄົງ ແນ່ນຫນາມັ່ນຄົງແນວໃດ? ໃນທີ່ນີ້ພຣະພຸທຂເຈົ້າໄດ້ບັນຍັຕິໄວ້ວ່າສຳຫຼັບ

ພຣະສົງຄ໌ທີ່ຈຳພັຣສາຄົບໄຕຣມາສ ຕັ້ງແຕ່ອອກພັຣສາໄປ ວັນ**ຕັກບາຕຣ໌ເທໂວ**[2]ຍັງທອດກຖິນບໍ່ໄດ້ຈຳໄວ້ເດີ້ ຫລັງຈາກວັນຕັກບາຕຣ໌ເທໂວມື້ນຶ່ງນັ້ນແຫລະຈົນເຖິງວັນລອຍກະທົງ ນຶ່ງເດືອນເຕັມໆ ພຣະພຸທສເຈົ້າບັຍຍັຕິໄວ້ວ່າສາມາຖທອດກຖິນໄດ້ໃນຣະຍະ ໑ ເດືອນ ອັນນີ້ຄືຄວາມມັ່ນຄົງ ຖ້າໃຜເບິ່ງພຈນານຸກຣົມກາສາອັງກລິສກໍຈະເຫັນໄດ້ວ່າ hard solid firm "**ມັ່ນຄົງ**" ມັ່ນຄົງຄືທີ່ພຣະພຸທສເຈົ້າບັຍຍັຕິໄວ້ ເຮົາຈະເລື່ອນໄປວັນອື່ນເດືອນອື່ນບໍ່ໄດ້ ບໍ່ມີໃຜສາມາຖຈະເລື່ອນໄດ້ ຕັ້ງແຕ່ສມັຍພຸທສກາລຕັ້ງແຕ່ພຣະພຸທສເຈົ້າບັຍຍັຕິຈົນເຖິງວັນນີ້ແລະອນາຄົຕຕໍ່ໄປ ຈະທອດກຖິນນີ້ໄດ້ສະເພາະເດືອນ

---

[2] **ຕັກບາຕຣ໌ເທໂວ** ຫມາຍເຖິງການທຳບຸຍຕັກບາຕຣ໌ ໃນວັນແຮມ 1 ຄ່ຳ ເດືອນ 11 ເນື່ອງໃນໂອກາສທີ່ພຣະພຸທສເຈົ້າສເດັຈລົງຈາກເທວໂລກ ຄຳວ່າ **ເທໂວ** ເອີ້ນຫ້ອນມາຈາກຄຳວ່າ ເທໂວໂຣຫະນະ (ເທວ+ໂອໂຣຫະນ) ຊຶ່ງແປລວ່າ *ການສເດັຈລົງຈາກເທວໂລກ*

ຄວາມເດີມມີວ່າ ໃນພັຣທີ່ 7 ນັບແຕ່ວັນຕຣັສຣູ້ ພຣະພຸທສເຈົ້າສເດັຈໄປຈຳພັຣຢູ່ເທິງສວັຣຄ໌ຊັ້ນດາວດຶງສ໌ເພື່ອເທສນ໌ໂປຣດພຣະພຸທສມາຣດາ ທີ່ໄດ້ກຳເນີດເປັນເທພບຸຕຣ໌ຢູ່ໃນຊັ້ນດຸສິຕ ຈົນບັຣລຸໂສດາປັຕຕິຜົລ ເມື່ອອອກພັຣໃນວັນຂຶ້ນ 15 ຄ່ຳ ເດືອນ 11 ແລ້ວ ຈຶ່ງສເດັຈລົງຈາກເທວໂລກທີ່ເມືອງສັງກັສສນຄຣ ໃນກາລທີ່ສເດັຈລົງຈາກເທວໂລກ ໄດ້ມີເນີນເປັນອັນດຽວກັນຈົນເຖິງພຣົຫມໂລກ ເມື່ອຊົງແລເບິ່ງທາງລຸ່ມ ສຖານທີ່ນັ້ນກໍມີເນີນອັນດຽວກັນຈົນເຖິງອເວຈີມຫານຣົກ ຊົງແລເບິ່ງທິສໃຫລ່ແລະທິສຂ້າງໆ ຈັກຣວາລຫລາຍແສນກໍມີເນີນເປັນອັນດຽວກັນ ເທວດາກໍເຫັນພວກມນຸສຍ໌ ແມ້ພວກມນຸສຍ໌ກໍເຫັນເທວດາ ສັຕວ໌ນຣົກກໍເຫັນມນຸສຍ໌ແລະເທວດາ ຕ່າງກໍເຫັນກັນສເພາະຫນ້າທີດຽວ ລຳດັບນັ້ນ ພຣະຜູ້ມີພຣະກາຄເຈົ້າຈຶ່ງຊົງເປລັ່ງຊັພພັຣຣັງສີ ຂະນະທີ່ພຣະອົງຄ໌ສເດັຈລົງມາຈາກສວັຣຄ໌ຊັ້ນດາວດຶງສ໌

ຮຸ່ງຂຶ້ນວັນແຮມ 1 ຄ່ຳ ເດືອນ 11 ຊາວເມືອງຈຶ່ງພາກັນທຳບຸຍຕັກບາຕຣ໌ເປັນການໃຫລ່ ເພາະບໍ່ໄດ້ເຫັນພຣະພຸທສເຈົ້າມາເຖິງ 3 ເດືອນ ການທຳບຸຍຕັກບາຕຣ໌ໃນວັນນັ້ນຈຶ່ງໄດ້ຊື່ວ່າ **ຕັກບາຕຣ໌ເທໂວໂຣຫະນະ** ຕໍ່ມາມີການເອີ້ນຫ້ອນໄປເຫລືອພຽງ **ຕັກບາຕຣ໌ເທໂວ** ເພື່ອຣະລຶກເຖິງເຫຕຸການຕ໌ໃນວັນນັ້ນ ຈຶ່ງນິຍົມ **ຕັກບາຕຣ໌ເທໂວ** ກັນຈົນເປັນປະເພນີສືບມາຈົນຮອດສູ່ມື້ນີ້ໆ

ດຽວເທົ່ານັ້ນ ຫລັງຈາກອອກພັຣษາມື້ນຶ່ງຈົນເຖິງວັນລອຍກະທົງ ອັນນີ້ມັ່ນຄົງແນ່ນຫນາ ແນ່ນອນແລ້ວ ບໍ່ມີໃຜຈະເຮັດລາຍໄດ້ ບໍ່ມີໃຜຈະເລື່ອນໄດ້ ບໍ່ມີໃຜຈະວ່າແນວໃດໄດ້ ຕ້ອງແນ່ນອນສະເພາະເດືອນດຽວ ມື້ດຽວ ໃນເດືອນດຽວນັ້ນພຣະພຸທສເຈົ້າບັຍຍັຕິໄວ້ວ່າ ສາມາຖເຮັດໄດ້ສະເພາະມື້ດຽວ ຈະເຮັດຫລາຍໆ ວັນບໍ່ໄດ້ ພາຍໃນນຶ່ງປີນີ້ເຮັດໄດ້ໃນເດືອນດຽວ ຫລັງຈາກວັນອອກພັຣษາຈົນເຖິງວັນລອຍກະທົງ ໑ ເດືອນເທົ່ານັ້ນ ພາຍໃນ ໑ ເດືອນນີ້ສາມາຖເຮັດໄດ້ສະເພາະມື້ດຽວ ພາຍໃນມື້ດຽວນັ້ນສາມາຖເຮັດໄດ້ສະເພາະເທື່ອດຽວ ***"ນີ້ຄືຄວາມມັ່ນຄົງແນ່ນອນອັນນີ້ຂໍ້ທີ່ ໑"*** ພຣະພຸທສເຈົ້າສແດງໄວ້ວ່າ ຜູ້ທີ່ໄດ້ຮ່ວມອນຸໂມທນາຖວາຍຜ້າກຖິນແລ້ວ ພຣະສົງຄ໌ທັ້ງຫລາຍຍ່ອມໄດ້ອານິສົງສ໌ຜົລປະໂຍຊນ໌ເຖິງ ໕ ເດືອນແນ່ນອນມັ່ນຄົງ ບໍ່ໄດ້ເກີນ ໕ ເດືອນ ບໍ່ໄດ້ຕໍ່າກວ່າ ໕ ເດືອນແນ່ນອນຢ່າງຊັດເຈນ ກໍຄືຕັ້ງແຕ່ອອກພັຣษາເຖິງເດືອນ ໔ ຂຶ້ນ ໑໕ ຄໍ່າ ພຣະສົງຄ໌ຈະໄດ້ຮັບອານິສົງສ໌ຂອງທີ່ໄດ້ອນຸໂມທນາກຖິນນີ້ເຖິງ ໕ ເດືອນຢ່າງແນ່ນຫນາມັ່ນຄົງ ເພາະສະນັ້ນເຮົາຈຶ່ງເອີ້ນກັນວ່າກຖິນບໍ່ແມ່ນ**ໄມ້ສະດຶງເດົ້** ນີ້ຄືຄໍາວ່າ "**ມັ່ນຄົງ**" ເພາະສະນັ້ນເຮົາໄປທອດຜ້າກຖິນກັນທີ່ນັ້ນທີ່ນີ້ ທອດກຖິນກໍຄືທອດຜ້າທີ່ມີຜົລປະໂຍຊນ໌ທີ່ມັ່ນຄົງຖາວຣ ມັ່ນຄົງເຖິງ ໕ ເດືອນ ຄວາມຫມາຍຈໍາງ່າຍໆ ກໍຄື "**ກຖິນ**" ກຖິນກໍຄື "**ມັ່ນຄົງ**" ແລະບໍ່ມີໃຜຈະສາມາຖປ່ຽນແປງໄດ້ ສາມາຖທອດໄດ້ສະເພາະເດືອນດຽວ ແລ້ວພຣະສົງຄ໌ຈະໄດ້ຜົລປະໂຍຊນ໌ເຖິງ ໕ ເດືອນແນ່ນອນ ອັນນີ້ຄືຄວາມຫມາຍຂອງກຖິນຈໍາໄດ້ບໍ່? ປີນຶ່ງເຮັດໄດ້ເດືອນນຶ່ງ ພາຍໃນເດືອນນຶ່ງເຮັດໄດ້ມື້ດຽວ ພາຍໃນມື້ນຶ່ງເຮັດໄດ້ເທື່ອດຽວ ແລ້ວພຣະສົງຄ໌ຍ່ອມໄດ້ຮັບຜົລປະໂຍຊນ໌ເຖິງ ໕ ເດືອນຢ່າງແນ່ນຫນາມັ່ນຄົງ ດັ່ງທີ່ພຣະສົງຄ໌ໄດ້ອນຸໂມທນາຜ້າກຖິນນີ້ແລ້ວ ໄດ້ຮັບອານິສົງສ໌ຜົລປະໂຍຊນ໌ມັ່ນຄົງເຖິງ ໕

ເດືອນ ຍາຕິໂຍມກໍໄດ້ຮັບຜົລປະໂຍຊນ໌ເຊັ່ນກັນຢ່າງແນ່ນອນ ນີ້ຄືກະຖິນ ທີ່ເຮົາວ່າທອດກະຖິນ ໂຍມກໍຖວາຍຜ້າໄຕຣຈີວຣຊື່ໆ ແລະພຣະສົງຄ໌ກໍທຳການກະຖານກະຖິນ ຕອນທີ່ຍາຕິໂຍມກ່າວຄຳຖວາຍ "**ກະຖິນັງ, ອັຕຖະຣະຕຸ...ໆ**" ຂໍໃຫ້ພຣະສົງຄ໌ກະຖານກະຖິນໂດຍຜ້ານີ້ ກະຖານໃນທີ່ນີ້ ຫມາຍຄວາມວ່າແນວໃດ "ກະຖານ" ກໍຄື ເບິ່ງໃນພຈນານຸກຣົມພາສາ ບາລີ ພາສາອັງກລິສກໍໄດ້ ຈະເຫັນໄດ້ວ່າ "lay out spreading out" ກະຖານກໍຄືຂຍາຍກວ້າງອອກໄປ ຂຍາຍກວ້າງອອກໄປຂຍາຍກວ້າງອອກໄປແນວໃດລະ? ເມື່ອໄດ້ຮັບກະຖິນໄປແລ້ວພຣະສົງຄ໌ກໍໄດ້ອນຸໂມທນາກະຖິນທີ່ທ່ານທັ້ງຫລາຍທີ່ໄດ້ຖວາຍໄປນັ້ນ ເຮັດໃຫ້ໄດ້ຮັບອານິສົງສ໌ຜົລປະໂຍຊນ໌ຈາກເດີມ ໑ ເດືອນເຖິງ ໕ ເດືອນ "ຈາກ ໑ ເດືອນເຖິງ ໕ ເດືອນ" ຍົກຕົວຢ່າງງ່າຍໆ ກໍຄືພຣະພຸທສເຈົ້າໄດ້ບັຍຍັຕິໄວ້ວ່າ ຖ້າພຣະສົງຄ໌ຈະຂໍອາຫາຣຈາກຍາຕິໂຍມ ຫຼືເຊັ່ນຂໍນັ້ນຂໍນີ້ຂໍອາຫາຣຢ່າງໃດຢ່າງນຶ່ງໄປ ແລ້ວກໍເອົາໄປສັນຮ່ວມກັນພຣະກໍຕ້ອງເປັນອາບັຕິ ແຕ່ວ່າຫລັງຈາກອອກພັຣษາໄປ ຍາຕິໂຍມທັ້ງຫລາຍກໍຮ່ວມຖວາຍຜ້າ ເປັນປະເພຕີມາຕັ້ງແຕ່ສມັຍພຸທສກາລ ເມື່ອພຣະສົງຄ໌ໄດ້ຢູ່ຈຳພັຣษາບໍຣິເວຕນີ້ ຢູ່ໃນປ່າທີ່ໃກ້ລ້ໆ ເຮົາ ເຮົາກໍມີໂອກາສຖວາຍພັຕຕາຫາຣ ມີໂອກາສສຶກษາຮ່ຳຮຽນພຣະສັມມ໌ຈາກພຣະສົງຄ໌ ເມື່ອອອກພັຣษາທ່ານກໍຈະຈາກເຮົາໄປແລ້ວຈະເດີນທາງໄປເພື່ອເຜີຍແຜ່ພຣະພຸທສສາສນາ ຄືພຣະສັມມ໌ຄຳສັ່ງສອນຂອງພຣະພຸທສເຈົ້າ ແຕ່ກ່ອນຈະອອກພັຣษາຍາຕິໂຍມກໍຕ້ອງການທີ່ຈະຖວາຍຜ້າ ການຖວາຍຜ້າໃນທີ່ນີ້ບໍ່ແມ່ນຜ້າທີ່ສຳເຣັຈຮູປເຫມືອນສມັຍນີ້ ອັນນີ້ກໍໃຫ້ເປັນຄວາມຮູ້ກໍແລ້ວກັນເດີ້ ໃນພາສາບາລີຂຽນໄວ້ວ່າ "ກະຖິນະທຸສສັງ" ໃຊ້ຄຳວ່າ ທຸສສັງ "ທຸສສັງ" ຫມາຍເຖິງວ່າຜ້າສມັຍນີ້ເຮົາກໍຕ້ອງປ່ຽນເປັນວ່າ "ກະຖິນະຈີວະຣະທຸສສັງ" ພາສາອັງກລິສກັບພາສາບາລີ

ຄລ້າຍໆ ກັນເຊັ່ນຄຳວ່າ cloth ກັບ clothes ຜ້າບໍ່ໄດ້ຍິບກໍ cloth ຍິບເປັນເສື້ອຜ້າໄປແລ້ວກໍ clothes ເຊັ່ນດຽວກັນ ຖ້າຖວາຍຜ້າຊື່ໆ ອາຈຈະເປັນສີຂາວກໍໄດ້ ຖວາຍໄປກໍເປັນ "**ທຸສສັງ**" ຄື "**ຜ້າ**" ສມັຍນີ້ຈີວຣສຳເຣັຈຮຽບຮ້ອຍບໍ່ແມ່ນ **ທຸສສັງ** ບໍ່ໃຊ້ຜ້າ ບໍ່ໃຊ້ cloth ມັນເປັນ clothes ໄປແລ້ວ ສະນັ້ນເຮົາເຖິງເອີ້ນວ່າ ຈີວະຣະ ເມື່ອສມັຍກ່ອນພຸ້ນການຖວາຍນັ້ນ ອາຈຈະບໍ່ແມ່ນຜືນໃຫຍ່ໆ ກໍໄດ້ເດີ້ ອາຈຈະມີບາງສ່ວນ (ຕ່ອນເລັກ ຕ່ອນໃຫຍ່) ກໍແລ້ວແຕ່ສັທສາຈະເປັນຄືບ ໑ ສອກ ໑ ວາ ໑ ກໍໄດ້ ໃຜມີກຳລັງເທົ່າໃດ ກໍຖວາຍກັນໄປຕາມກຳລັງ ພຣະສົງຄ໌ທັ້ງຫລາຍກໍຕ້ອງມີການຍິບດ້ວຍຕົນເອງ ເວລາຍິບກໍບໍ່ແມ່ນສັມມະດາໆ ກໍມີວິສີ ວິສີທຳວ່າຈະຕ້ອງທຳແນວໃດ ໃຫ້ສັງເກຕເບິ່ງກໍ ເຫມືອນທຸ່ງນານັ້ນແຫລະ ຈະຕ້ອງຫ່າງກັນເທົ່າໃດຕ້ອງຕັດແນວໃດ ມັນກໍມີຢູ່ໃນ ພຣະສັມມວິນັຍກໍສແດງໄວ້ວ່າຕ້ອງທຳແນວໃດ ພຣະສົງຄ໌ກໍເອົາຜ້າທັ້ງຫລາຍເຫຼົ່ານັ້ນ ມາຍິບໃຫ້ຖືກຕ້ອງຕາມພຣະສັມມວິນັຍເມື່ອຍິບເສຣັຈກໍຕ້ອງຍ້ອມ ຍ້ອມເສຣັຈກໍຕ້ອງ ທອດກຖິນໃນມື້ນັ້ນ ຕ້ອງໃຫ້ເສຣັຈກ່ອນທີ່ອຣຸຕຈະຂຶ້ນ ເຊັ່ນວ່າເຮົາທອດວັນນີ້ຈົນເຖິງ ມື້ອື່ນນີ້ກ່ອນອຣຸຕຂຶ້ນ ຕ້ອງໃຫ້ເສຣັຈຮຽບຮ້ອຍ ເກີນມື້ນຶ່ງກໍບໍ່ໄດ້ ນີ້ແນ່ນອນ ກໍຈຶ່ງເອີ້ນວ່າ "**ກຖິນ**" ແຕ່ສມັຍນີ້ເປັນຜ້າທີ່ສຳເຣັຈຮຽບຮ້ອຍກໍເລີຍສະດວກສບາຍ ພຣະສົງຄ໌ກໍບໍ່ ຕ້ອງຍິບຕ້ອງຍ້ອມໃຊ້ໄດ້ເລີຍຈຳງ່າຍໆ ກໍຄືກຣານກຖິນ ໃນທີ່ນີ້ກຣານກໍຄືເຮັດໃຫ້ຜົລປະ ໂຍຊນ໌ຂຍາຍກວ້າງອອກໄປ ເອີ້ນວ່າ "**ກຣານກຖິນ**" ຈຳໄວ້ເດີ້ ຖ້າຈະເບິ່ງຫລັກການທີ່ ແນ່ນອນຂອງຄຳເວົ້າເມື່ອກີ້ນີ້ກໍຕ້ອງເບິ່ງໃນພຈນານຸກຣົມ ພາສາບາລີ-ອັງກລິສກໍໄດ້ ພາສາບາລີ-ໄທຍກໍໄດ້ ກໍຈະໄດ້ເຫັນຢ່າງຊັດເຈນວ່າ ກຖິນຄືຫຍັງ? ກຣານກຖິນຄືຫຍັງ?

ແລ້ວກໍຂໍ້ທີ່ ๑ ຜ້າກຖິນນີ້ພຣະພຸທສເຈົ້າອນຸຍາຕໃຫ້ທອດກຖິນໃຫ້ທຳແນວໃດ? ອັນນີ້ຄວຣທີ່ຈື່ຈຳໄວ້ເພາະເຮົາທອດກຖິນກັນຢູ່ທຸກປີ ບາງຄົນກໍໄປທອດກຖິນເກົ້າວັດ ກໍຢາກໃຫ້ຮູ້ວ່າເຣື່ອງກຖິນນີ້ເປັນມາແນວໃດ ສ່ວນໃຫຍ່ກໍຄືດວ່າໄປທອດຖວາຍກຖິນເກົ້າວັດຈະໄດ້ບຸຍຍິ່ງໃຫຍ່ ***ກຖິນຄືຫຍັງ? ກໍບໍ່ຮູ້! ການການກຖິນຄືຫຍັງ? ກໍບໍ່ຮູ້! ຄວາມເປັນມາຂອງກຖິນມີແນວໃດ? ກໍບໍ່ຮູ້!***

ຫລັງຈາກພຣະພຸທສເຈົ້າບັຣລຸເປັນພຣະສັມມາສັມພຸທສເຈົ້າແລ້ວ ແລະໃນພັຣษາທີ່ສອງນັ້ນແຫລະ ຕອນນັ້ນພຣະພຸທສເຈົ້າກໍໄປປະທັບຢູ່ທີ່ປ່າອຸຣຸເວລະ ທີ່ທ່ານເຄີຍປຸຕິບັຕິສັມມ໌ຢູ່ເປັນເວລາ ๖ ປີ ປະທັບຢູ່ໃຕ້ຕົ້ນໄມ້ຕົ້ນນຶ່ງ ຕອນນັ້ນກໍມີ <u>ພັທທວັຄຄີກຸມາຣ ๓໐ ຄົນ</u> (ພຣະກືກບຸຊາວປາໄຖຍຣັກ (ປາວາ) ຜູ້ຊົງສຸດົງຄ໌ ຈຳນວນ ๓໐ ອົງຄ໌) ຊົນເຫຼົ່ານີ້ບໍ່ແມ່ນຄົນສັມມະດາໆ ເດີ້ ເປັນລູກພີ່ລູກນ້ອງຂອງພຣະເຈົ້າປເສນທິໂກສົລ ເຄີຍໄດ້ຍິນແມ່ນບໍ່? ພຣະເຈົ້າປເສນທິໂກສົລເປັນພຣະມຫາກษັຕຣິຍ໌ ເພາະສມັຍກ່ອນພຸ້ນບໍ່ເຫມືອນສມັຍນີ້ ພຣະມຫາກษັຕຣິຍ໌ມີມເຫສີຫຼວງຫຼາຍ ກໍມີລູກເຕົ້າຫຼວງຫຼາຍພໍ່ດຽວກັນແຕ່ຄົນລະແມ່ ທີ່ເອີ້ນວ່າ "ພັທທວັຄຄີ ๓໐ ທ່ານ" ມື້ນຶ່ງເຂົາ ພາກັນໄປປິກນິກ ຮັບປະທານອາຫາຣກາງແຈ້ງ ພັທທວັຄຄີ ๒๙ ຄົນມີພັຣຍາຂອງຕົນໆ ສ່ວນອີກຄົນນຶ່ງຍັງບໍ່ໄດ້ແຕ່ງງານ ແຕ່ທຸກຄົນກໍມີພັຣຍາໄປດ້ວຍ ຄົນທີ່ບໍ່ໄດ້ແຕ່ງງານກໍຈ້າງສຸກາພ ສຕຣີທ່ານນຶ່ງໄປກັບເຂົາ ຊົນເຫຼົ່ານນີ້ກໍເຂົ້າໄປໃນປ່າໄປສນຸກສນານກັນ "***ໃນພຣະສັມມ໌ຄັມພີຣ໌ກໍບໍ່ໄດ້ສແດງ...ແຕ່ອາຕມາຄືດວ່າເມື່ອເຈົ້າຟ້າຊາຍທັ້ງຫລາຍເຂົ້າໄປສັງສັຣຄ໌ກັນໃນປ່າ ກໍຄົງມີເຄື່ອງດື່ມແດ່ຄືດວ່ານະ***" ເມື່ອດື່ມເສຣັຈກໍເປັນຈັ່ງໃດລະ? ກໍຕ້ອງເມົານັ່ນແຫລະ! ແລ້ວກໍເຜີຫລັບໄປ ໃນຂຕະທີ່ຫລັບຢູ່ນັ້ນແຫລະ ໂຍມ

ສຸກາພສຕຣີເຫັນ ເຄື່ອງປະດັບຂອງລູກກາບັຕຣີຍ໌ທີ່ເປັນເພັຊຣ໌ນິລຈິນດາ ແລ້ວກໍຖືໂອກາສເອົາສິ່ງຂອງທີ່ມີຄຸຕຄ່າເທົ່າທີ່ເອົາໄດ້ຫນີໄປ ພໍເຖິງເວລາກໍຕື່ນຂຶ້ນມາຫາຜູ້ຫລິງຄົນນັ້ນບໍ່ພໍ້ ກໍເລີຍປຣືກຫາກັນຕາມຈັບຜູ້ຫລິງຄົນນັ້ນ ກໍລອງຄິດເບິ່ງກໍແລ້ວກັນ ຜູ້ຊາຍກໍ ๑໐ ຄົນ ສ່ວນຜູ້ຫລິງກໍ ๙ຝ ຄົນທີ່ເປັນມເຫສີຂອງເຂົາກໍຕາມຫາຜູ້ຫລິງຄົນນັ້ນ ແຕ່ແນວໃດໄດ້ໄປເຈີພຣະພຸທສເຈົ້າປະທັບຢູ່ໃຕ້ຕົ້ນໄມ້ນັ່ງຂັດສມາສີຢູ່ ເຂົາທັງຫລາຍກໍໄດ້ກຣາບພຣະພຸທສເຈົ້າ ພໍກຣາບເສຣັຈແລ້ວກໍໄດ້ເລົ່າເຣື່ອງທີ່ເກີດຂຶ້ນວ່າ ມີໂຍມຜູ້ຫລິງຄົນນຶ່ງໄດ້ເອົາສິ່ງຂອງໆເຂົາໄປ ແລະໄດ້ຕາມຫາຜູ້ຫລິງຄົນນີ້ຢູ່ ເຂົາເຫຼົ່ານັ້ນໄດ້ທູລຖາມພຣະພຸທສເຈົ້າວ່າ "***ເຫັນເຂົາມາທາງນີ້ແດ່ບໍ່ພຣະພຸທສເຈົ້າຂນ້ອຍ?*** " ພຣະພຸທສເຈົ້າກໍໄດ້ຫຼຽວເຫັນນິສັຍຂອງເຂົາເຫຼົ່ານັ້ນ ໄດ້ຮູ້ວ່າເຂົາເຫຼົ່ານັ້ນເປັນຜູ້ມີບາຣມີສູງ ແລະຈຶ່ງໄດ້ຄິດໂຜດຊົນເຫຼົ່ານັ້ນ ແລະຖາມວ່າ "***ກາຣທີ່ຫາຜູ້ຫລິງຄົນນັ້ນກັບກາຣຫາຕົວເອງອັນໃດດີກວ່າປະເສີຖກວ່າ?*** " ຄືຄວາມຫມາຍທີ່ພຣະພຸທສອົງຄ໌ຊົງປະສົງຄ໌ຖາມກໍຄື ***ກາຣທີ່ຕາມຫາຜູ້ຫລິງທີ່ລັກເອົາສິ່ງຂອງໆເຂົາໄປ ກັບກາຣຫາຕົວຕົນຂອງເຂົາເອງອີຫຍັງປະເສີຖກວ່າ?*** ຊົນເຫຼົ່ານັ້ນຕອບວ່າກາຣທີ່ຫາຕົວເອງນີ້ປະເສີຖກວ່າ ເພາະຊົນເຫຼົ່ານັ້ນໄດ້ສັ່ງສົມບາຣມີມາຫຼາຍພໍຈຶ່ງສາມາຖຮູ້ໄດ້ວ່າ "***ກາຣຫາຕົວເອງປະເສີຖກວ່າ***"

ກໍລອງຄິດເບິ່ງກໍແລ້ວກັນ ຖ້າເປັນຄົນສັມມະດາໆ ຈະບໍ່ຮູ້ວ່າຫາຕົວເອງແນວໃດ ເພາະເຂົາກໍນັ່ງຢູ່ບ່ອນນັ້ນ ຄວາມຈິງກໍຄືເຂົາເຫຼົ່ານັ້ນມີບາຣມີສູງ ຮູ້ຄວາມຫມາຍທັນທີວ່າຕົວເຂົາເອງທີ່ນັ່ງຢູ່ທີ່ນີ້ຍັງຖືວ່າມີຕົວມີຕົນ ແທ້ໆ ແລ້ວບໍ່ແມ່ນຢ່າງນັ້ນ "***ມີແຕ່ຮູປສັມມ໌ນາມສັມມ໌ເທົ່ານັ້ນ***" ມັນເປັນສິ່ງທີ່ບໍ່ແນ່ນອນ ກໍສແດງວ່າເຖິງຮູ້ຄວາມຫມາຍທີ່ຖາມ ພຣະ

ພຸທສເຈົ້າກໍບອກວ່າຖືກຕ້ອງແລ້ວ ການທີ່ທ່ານທັ້ງຫລາຍຫາຜູ້ຫລິງທີ່ຫນີໄປກັບການຫາຕົວເອງ "***ການຫາຕົວເອງນີ້ດີກວ່າປະເສີດກວ່າ***" ຖ້າຢ່າງນັ້ນທ່ານທັ້ງຫລາຍຄວຣນັ່ງລົງ ເຮົາຕຖາຄົຕຈະສແດງສັມມ໌ໃຫ້ຟັງ ເຂົາກໍນັ່ງລົງພ້ອມປນົມມືແລະຕັ້ງຈິຕຕັ້ງໃຈຟັງ ພຣະພຸທສເຈົ້າກໍໄດ້ສແດງສັມມ໌ໄປເລື້ອຍໆ ***ເຂົາເຫຼົ່ານັ້ນໄດ້ບັຣລຸເປັນພຣະໂສດາບັນກັນທັ້ງຫມົດ*** ເຣື່ອງຜູ້ຫລິງເຂົາກໍລືມໄປແລ້ວເພາະເຂົ້າໃຈສັມມ໌ແລະບັຣລຸສັມມ໌ໄປ ເພາະເຂົາມີບາຣມີທີ່ໄດ້ສັ່ງສົມມາຫລາຍກົພຫລາຍຊາຕິ ເມື່ອໄດ້ບັຣລຸສັມມ໌ແລ້ວພຣະພຸທສເຈົ້າຈຶ່ງຕຣັສວ່າ ***ເອຖຸພິກຂໂວ***[3] ດູກ່ອນທ່ານທັ້ງຫລາຍຈົ່ງມາຖ້ອນ ເມື່ອພຣະພຸທສເຈົ້າເອີ້ນເຂົາທັ້ງຫມົດກໍໄດ້ເປັນ "***ເອຫິພິກຂຸ***[4]" ດ້ວຍບຸຜບາຣມີທີ່ສ້າງໄວ້ໃນອດີຕນັ້ນແຫລະ ຈຶ່ງໄດ້ມີຜ້າໄຕຣຈີວຣ, ບາຕຣ໌ສົມບູຣຕ໌ ຜົມກໍໂກນຮຽບຮ້ອຍ ໂດຍແບບບໍ່ນ່າເຊື່ອກໍເປັນພຣະສົງຆ໌ໄປ ເມື່ອເປັນພຣະສົງຆ໌ໄປກໍເປັນທີ່ນ່າຊົມເຊີຍເພາະບໍ່ແມ່ນຄົນສັມມະດາ ພວກເຂົາທັ້ງຫລາຍກໍເປັນເຊື້ອກບັຕຣິຍ໌ເປັນລູກຂອງມຫາກບັຕຣິຍ໌ ເມື່ອບວຊເປັນພຣະໄປເຂົາກໍປຜິບັຕິຢ່າງເຄັ່ງຄັດ ຖືທຸດົງຄ໌ຈະຢູ່ແຕ່ໃນປ່າບໍ່ຢູ່ໃນເມືອງ ມັກຢູ່ໃຕ້ຕົ້ນໄມ້ແລະອອກບິຕຫບາຕຣ໌ ໃຊ້ຜ້າບັງສຸກຸລຈີວຣນີ້ແຫລະ ຖືທຸດົງຄ໌ມີຜ້າໄຕຣ ໓ ຜືນ ໃຊ້ຜ້າບໍ່ເກີນສາມຜືນ ມີຜ້າສບົງຜືນ ໑ ຈີວຣຜືນ ໑ ແລະສັງຆາຕິທີ່ວາງເທີງບ່າຜືນ ໑ ແລະປຜິບັຕິສັມມ໌ກັນຕໍ່ໄປ

---

[3] **ພິກຂໂວ** *ພຣະພຸທສດຳຣັສຕຣັສໃຫ້ອຸປສົມບົທແກ່ຄົນຫລາຍຄົນທີ່ມາຂໍບວຊ ມີຄວາມວ່າທ່ານທັ້ງຫລາຍຈົ່ງເປັນພິກຂຸມາເຖີດ, ຖ້າຄົນດຽວຂໍບວຊກໍຕຣັສວ່າ **ເອຫິພິກຂຸ** ທ່ານຈົ່ງເປັນພິກຂຸມາເຖີດ.*

[4] **ເອຫິພິກຂຸ** *ເປັນເອີ້ນພິກຂຸທີ່ໄດ້ຮັບອຸປສົມບົທຈາກພຣະພຸທສເຈົ້າໂດຍຕົງ ດ້ວຍວິທີບວຊທີ່ເອີ້ນວ່າ **ເອຫິພິກຂຸອຸປສັມປທາ** ພຣະອັນຍາໂກຕທັນຍະ ເປັນເອຫິພິກຂຸອົງຄ໌ທຳອິດ*

ທ່ານເຫຼົ່ານັ້ນໃຊ້ເວລາ ໑໕ ປີ ຢູ່ໃນປ່າ ໑໕ ປີປຜິບັຕິສັມມ໌ກັນໄປລອງຄິດເບິ່ງກໍແລ້ວກັນ ທ່ານຟັງສັມມ໌ບໍ່ເຖິງ ໑ ຊົ່ວໂມງກໍບັຣລຸເປັນໂສດາບັນໄດ້ ທ່ານປຜິບັຕິສັມມ໌ຢູ່ໃນປ່າອີກ ໑໕ ປີຍ່ອມໄດ້ເປັນພຣະອຣຫັນຕ໌ແນ່ນອນ ເຖິງເວລາ ໑໕ ປີ ຕອນນີ້ທ່ານທັ້ງຫລາຍຣະລຶກເຖິງບຸຍຄຸຕຂອງພຣະພຸທສເຈົ້າວ່າ ຕອນນີ້ພຣະພຸທສເຈົ້າປະທັບຢູ່ບ່ອນໃດ? ໄດ້ຂ່າວວ່າພຣະພຸທສເຈົ້າຈະຈຳພັຣษາຢູ່ເມືອງສາວັຕຖີ ຈາກທີ່ທ່ານຢູ່ກັບເມືອງສາວັຕຖີກໍໄກລກັນຫຼາຍ ສມັຍນີ້ຖ້າຂັບຣົຖໄປໃຊ້ເວລາ ໑ ວັນ ໄກລຫຼາຍ ທ່ານເຫຼົ່ານັ້ນກໍຢາກເຂົ້າໄປເຝົ້າພຣະພຸທສເຈົ້າ ຢາກຈະໄປກຣາບພຣະພຸທສເຈົ້າກໍເດີນທາງກັນໄປສມັຍນັ້ນບໍ່ມີຣົຖແມ່ນບໍ່? ກໍຕ້ອງເດີນເທົ້າເອົາ ເດີນທາງໄປກ່ອນຈະເຂົ້າພັຣษາ ແທ້ໆ ແລ້ວຢາກຈະໄປກຣາບພຣະພຸທສເຈົ້າກ່ອນເຂົ້າພັຣษາແຕ່ບໍ່ເຖິງ ກ່ອນຈະເຖິງເມືອງສາວັຕຖີ ມີເມືອງນຶ່ງທີ່ມີຊື່ວ່າ "**ເມືອງສາເກຕ**" ຈາກເມືອງສາເກຕໄປເມືອງສາວັຕຖີຫ່າງໄກລກັນປະມາຕ ໖ ໂຍຊນ໌ ກໍປະມາຕ ໖໐ ໄມລ໌ ຖ້າຈະເດີນທາງດ້ວຍເທົ້າກໍຄິດເບິ່ງກໍແລ້ວກັນ ກໍຄົງບໍ່ມີເວລາແລ້ວຈະເຂົ້າພັຣษาແລ້ວ ແລ້ວຈະເຮັດແນວໃດ? ກໍຕ້ອງຈຳພັຣษາທີ່ເມືອງນີ້ໄປ

ໃນຣະດູເຂົ້າພັຣษາກໍມີພຣະພຸທສບັຍຍັຕິໄວ້ວ່າ ບໍ່ໃຫ້ເດີນທາງໄປໃສນອກຈາກກໍຣະນີພິເສษ ***(ອັນນີ້ສຳຫຼັບຄວາມຮູ້ເດີ້)*** ໃນພັຣษາບໍ່ແມ່ນວ່າພຣະສົງฆ໌ຫ້າມໄປໃສ ກໍຂໍເວົ້າຫຍໍ້ໆ ກໍແລ້ວກັນ ເພື່ອໃຫ້ເປັນຄວາມຮູ້ ໃນຣະຫວ່າງພັຣษາມີຢູ່ ໕ ກໍຣະນີ ຖ້າຫາກມີ ໕ ກໍຣະນີນີ້ກໍໄປໄດ້

ກໍຣະນີທີ່ ໑ ຖ້າມີຍາຕິໂຍມຢາກຈະເຮັດບຸຍທຳທານແລະນິມົນຕ໌ໃຫ້ໄປກໍໄປໄດ້ແຕ່ກາຍໃນ ໗ ວັນກໍຕ້ອງກລັບມາ

ກໍຣະນີທີ່ ໔ ຖ້າມີຍາດຕິໂຍມຢາກຈະພົບຈະກາບນມັສການແລະນິມົນຕ໌ໄປເພື່ອເປັນບຸນກຸສົລສຳຫຼັບເຂົາກໍໄປໄດ້ ແຕ່ຫ້າມເກີນ ໗ ວັນ

ກໍຣະນີທີ່ ໕ ຖ້າມີຍາດຕິໂຍມທ່ານໃດທ່ານນຶ່ງ ທີ່ຢູ່ຕ່າງເມືອງຕ່າງຣັດຢາກຈະຟັງເທສນ໌ຟັງສົມນ໌ ນິມົນຕ໌ໄປກໍໄປໄດ້ ໕ ຢ່າງນີ້ຖ້າມີໃຜຢາກທຳບຸນ ຖ້າມີໃຜທີ່ຕ້ອງການພົບ ຫຼືຖ້າມີໃຜຢາກຈະຟັງເທສນ໌ຟັງສົມນ໌ຈຶ່ງຈະໄປໄດ້ ນອກຈາກ ໕ ປະການນີ້ໄປບໍ່ໄດ້ ນີ້ເວົ້າແບບຫຍໍ້ ຖ້າເວົ້າຢ່າງລະອຽດມັນກໍຍາວ

ສ່ວນ ໕໐ ທ່ານນີ້ກໍເຖິງເມືອງສາເກຕກ່ອນເຖິງເມືອງສາວັຕຖີ ອີກປະມານ ໖໐ ໄມລ໌ ກໍເປັນວັນເຂົ້າພັຣສາແລ້ວ ຈຳເປັນຈະຕ້ອງຢູ່ທີ່ນັ້ນ ຄືຈຳພັຣສາຢູ່ທີ່ເມືອງສາເກຕນັ້ນໄປ ເມື່ອຈຳພັຣສາທີ່ນັ້ນກໍຕ້ອງຄອຍຈົນວັນອອກພັຣສາ ກໍຈະໄດ້ໄປກາບພຣະພຸທສເຈົ້າ ພໍອອກພັຣສາແລ້ວທ່ານເຫຼົ່ານັ້ນກໍອອກເດີນທາງຕໍ່ ຄືໃນຊ່ວງເດືອນ



ຕຸລາຄົມຝົນກໍຕົກຫນັກຫຼາຍ ທ່ານກໍເດີນທາງໄປຫຼາຍມື້ໆ ແລະກໍບໍ່ມີຄັນຮົ່ມນຳ ພຣະທັງ ໕໐ ອົງຄ໌ນີ້ ທ່ານຖືຜ້າໄຕຣຈີວອນສເມີ ຄືມີພຽງຜ້າ ໕ ຜືນ ຜ້າເທົ່ານັ້ນບໍ່ແມ່ນຜ້າສົມມະດາໆ ເປັນຜ້າບັງສກຸລ ເປັນຜ້າທີ່ຕ້ອງມາຍິບຍ້ອມເອົາເອງ ໂດຍສະເພາະໃນຜ້າສາມຜືນນັ້ນ ຄືຜ້າສັງຄາຕິປົກກະຕິເປັນຜ້າທີ່ວາງໄວ້ເທິງບ່າ ມີ ໔ ຊັ້ນ ໔ ຜືນຍິບຕິດກັນ ເປັນຜ້າທີ່ຫນາກວ່າ

ຜ້າສັນມະດາໆ ຄືເວລາພຣະສົງພ໌ທັ້ງຫລາຍຈະໄປໃສມາໃສ ເຊັ່ນເວລາເຂົ້າໄປໃນປ່າ ເວລາຈະນັ່ງສມາຣິກໍເອົາຜ້າຜືນນີ້ແຫລະ ພັບເປັນ ໔ ພັບກໍປູນັ່ງເປັນອາສນະໄປ ເມື່ອເດີນທາງກໍວາງເທີງບ່າໄປ ຖ້າຮ້ອນກໍວາງເທີງຫົວໄປ ຖ້າຈະນອນກໍໃຊ້ເປັນຜ້າຫົ່ມໄປ ຄືບໍ່ມີຜ້າຫົ່ມບໍ່ມີຫມອນລະ ຜ້າສັງພາຜິທີ່ທ່ານເຫຼົ່ານີ້ໃຊ້ກໍຄຶດເບິ່ງກໍແລ້ວກັນ ກໍໃຊ້ມາຫລາຍປີ ຜ້າກໍບໍ່ແມ່ນຜ້າທີ່ດີເຫມືອນສມັຍນີ້ ທັ້ງຫນາແລະຫນັກ ບໍ່ແມ່ນວ່າຫນາຫນັກຊື່ໆ ເກົ່າກໍເກົ່າແລະກໍຖືກນ້ຳຝົນຕລອດເວລາ ຜ້າກໍຫນັກຂື້ນແລະກໍເດີນທາງໄປຫຼາຍມື້ ເລີ້ມຕົ້ນກໍຜ້າກໍເກົ່າໆ ຢູ່ແລ້ວຖືກຝົນອີກ ແລະກໍເດີນທາງອີກຕັ້ງ ໕໐ ໄມລ໌ບໍ່ແມ່ນສັນມະດາໆ

ເມື່ອເຖິງເມືອງສາວັຕຖີກໍໄດ້ເຂົ້າເຝົ້າພຣະພຸທສເຈົ້າ ພຣະພຸທສເຈົ້າກໍຖາມທ່ານທັ້ງເຫຼົ່ານັ້ນວ່າ "***ການເດີນທາງສະດວກສບາຍບໍ່?*** ທ່ານຫລ່ານັ້ນກໍຕອບວ່າ "***ລຳບາກມາກໆ ພຣະພຸທສເຈົ້າຂ້ານ້ອຍ***" ການເດີນທາງຝົນກໍຕົກຈີວຣກໍທັ້ງປຽກແລະຫນັກ ກໍຄຶດເບິ່ງກໍແລ້ວກັນທັ້ງຫນັກທັ້ງປຽກລຳບາກລຳບົນແມ່ນບໍ່ ພຣະພຸທສເຈົ້າເກີດຄວາມສົງສານຂື້ນມາ ກໍເນື່ອງຈາກພຣະທັ້ງ ໓໐ ທ່ານນີ້ແຫລະຈຶ່ງໄດ້ຊົງອນຸຍາຕໃຫ້ຍາຕິໂຍມທັ້ງຫລາຍຖວາຍຜ້າກຖິນໄດ້ ຫລັງຈາກຖວາຍຜ້າກຖິນແລະໄດ້ອນຸໂມທນາຜ້າກຖິນໄປຈະໄດ້ອານິສົງສ໌ຜົລປະໂຍຊນ໌ ໕ ປະການເຖິງ ໕ ເດືອນ ອັນນີ້ກໍຄືສຳຫຼັບຄວາມຮູ້ກ່ຽວກັບການທອດກຖິນວ່າຕັ້ງແຕ່ຍາມໃດ? ກໍໃຫ້ລອງຄຶດເບິ່ງກໍແລ້ວກັນ ຫລັງຈາກພຣະພຸທສເຈົ້າຕຣັສຮູ້ແລ້ວນຶ່ງພັຣษາເຂົາໄດ້ໄປພົບພຣະພຸທສເຈົ້າແມ່ນບໍ່? ທ່ານເຫຼົ່ານັ້ນກໍໄດ້ບວຊມາ ໑໓ ພັຣษາ ຮວມກັນເປັນເທົ່າໃດ? ໑໔ ພັຣษາ ຄື***ຫລັງຈາກທີ່ພຣະພຸທສເຈົ້າບັຣລຸອນຸຕຣສັມມາສັມໂພຮິຍາຕເປັນພຣະພຸທສເຈົ້າເປັນເວລາ ໑໔ ປີ ນີ້ຄືການເລີ້ມຕົ້ນທອດກຖິນ***

ທີ່ນີ້ຂໍ້ທີ່ ໔ ອັນນີ້ກໍສຳຄັນ ເມື່ອທອດກຖິນໄປມີປະໂຍຊນ໌ຫຍັງແດ່ ກໍເພື່ອໃຫ້ມີປະໂຍຊນ໌ແກ່ພຣະສົງຄ໌ ໕ ປະການ ຢ່າງແນ່ນອນ ປະການທຳອິດກໍຄືເຊັ່ນ ພຣະສົງຄ໌ເຮົາສັມມະດາໆ ເມື່ອມີຍາຕິໂຍມນິມົນຕ໌ອອກໄປທາງນອກ ຖ້າຈະອອກໄປຕ້ອງ ບອກພຣະສົງຄ໌ອົງຄ໌ໃດອົງຄ໌ນຶ່ງວ່າຈະໄປສຸຣະບ່ອນໃດ ***ຖ້າອອກໄປໂດຍບໍ່ໄດ້ບອກໃຜກໍເປັນອາບັຕິ*** ນີ້ເປັນກົດຂອງພຣະສົງຄ໌ ໑ ໃນສີລ ໒໒໗ ຂໍ້ ພຣະສົງຄ໌ຖ້າອອກໄປທາງນອກ ຕ້ອງບອກກ່າວພຣະສົງຄ໌ອົງຄ໌ອື່ນທີ່ຢູ່ທີ່ວັດວ່າຈະໄປໃສ ຖ້າບໍ່ບອກແລ້ວອອກໄປກໍເປັນ ອາບັຕິ

ເມື່ອສມັຍພຸທສກາລພຸ້ນ ພຣະສົງຄ໌ຢູ່ຈຳພັຣສາຄົບ ໓ ເດືອນ ຕອນນີ້ທ່ານຈະເດີນ ໄປທີ່ອື່ນແລ້ວ ຈະໄປເຜີຍແຜ່ພຣະສັມມ໌ຄຳສອນຂອງພຣະພຸທສເຈົ້າ ຍາຕິໂຍມກໍຮ່ວມ ກັນຖວາຍຜ້າ ຄົນນັ້ນກໍຖວາຍຄົນນີ້ກໍຖວາຍ ເວລາຖວາຍພຣະສົງຄ໌ກໍຍຸ່ງລະ ຍຸ່ງແນວໃດລະ ທີນີ້? ຜ້າກໍຕ້ອງຕັດຕ້ອງຍິບຕ້ອງຍ້ອມຕ້ອງຊ່ວຍກັນທຳແມ່ນບໍ່? ເປັນ ເວລາທີ່ busy ນາກກໍເຊັ່ນວ່າ ຈະອອກໄປຕັດຜ້າບ່ອນພຸ້ນ ຕ້ອງໄປຍ້ອມເວລາຍ້ອມກໍຕ້ອງໄປຫາເປລືອກ ໄມ້ຢ່າງດີເປັນຕົ້ນແຫລະ ຖ້າຈະອອກໄປທຳສຸຣະທາງນອກກາຍໃນ ໑ ເດືອນເດີ້ ເຖິງແມ້ວ່າບໍ່ທອດກຖິນກໍຕາມ ກາຍໃນ ໑ ເດືອນຫລັງຈາກອອກພັຣສາຈົນເຖິງວັນ ລອຍກະທົງອອກໄປໄດ້ ***ພຣະບໍ່ເປັນອາບັຕິ*** ເພາະເຫຕຸໃດ? ເພາະພຣະສົງຄ໌ນັ້ນເປັນຊ່ວງ ທີ່ busy ຫຼາຍ ຫລັງຈາກໄດ້ຮັບກຖິນແລະອນຸໂມທນາຜ້າກຖິນນັ້ນແລ້ວ ບໍ່ແມ່ນ ສະເພາະເດືອນດຽວເດີ້ ຈົນເຖິງເດືອນ ໔ ຂຶ້ນ ໑໕ ຄ່ຳ ຄືເປັນເວລາ ໕ ເດືອນ ນີ້ໄດ້ອາ ນິສົງສ໌ຜົລປະໂຍຊນ໌ກວ້າງອອກໄປ ຖ້າມີສຸຣະຢາກອອກໄປກໍອອກໄປໄດ້ບໍ່ເປັນອາບັຕິ ເຫັນບໍ່ນີ້! ເພາະສະນັ້ນການກຣານກຖິນທີ່ບອກໄປເມື່ອຕະກີ້ນີ້

ເຮັດໃຫ້ມີອານິສົງສ໌ຜົລປະໂຍຊນ໌ໃຫ້ຂຍາຍກວ້າງອອກໄປຈາກ ໑ ເດືອນເຖິງ ໕ ເດືອນ ຖ້າບໍ່ມີການທອດກຖິນມີຜົລປະໂຍຊນ໌ພຽງເດືອນດຽວ ຖ້າມີການທອດກຖິນ (ກຣານກຖິນ) ກໍຈະໄດ້ຜົລປະໂຍຊນ໌ມາກຂຶ້ນເຖິງ ໕ ເດືອນ ເປັນອິສຣະແມ່ນບໍ່? ພຣະສົງຄ໌ໄດ້ມີຄວາມອິສຣະເພີ່ມຂຶ້ນ ນີ້ຕາມກົຍພຣະວິນັຍ ຄືແນວໃດ ບໍ່ຈຳເປັນຕ້ອງບອກພຣະທີ່ຢູ່ວັດ ກໍສແດງວ່າພຣະສົງຄ໌ນີ້ຈະໄປໃສບໍ່ບອກໃຜກໍບໍ່ເປັນອາບັຕິ (ໃນຊ່ວງ ໕ ເດືອນທີ່ກ່າວມານີ້) ທີ່ພຣະພຸທສເຈົ້າບັຓຍັຕິໄວ້ບໍ່ມີໃຜຈະຫ້າມໄດ້ ອັນນີ້ແຫລະເຈົ້າກາພຜູ້ທີ່ຖວາຍຜ້າກຖິນນີ້ໄດ້ຜົລປະໂຍຊນ໌ຫຍັງ? ກໍເຮັດໃຫ້ພຣະສົງຄ໌ໄປໃສມາໃສກໍສະດວກສບາຍມີຄວາມ ເປັນອິສຣະ ຍາຕິໂຍມທີ່ຖວາຍກຖິນກໍຈະໄປໃສມາໃສກໍປລອດກັຍມີຄວາມເປັນອິສຣະບໍ່ມີໃຜຈະຫ້າມໄດ້ ບໍ່ມີກັຍອັນຕຣາຍຫຍັງທັ້ງສີ້ນເປັນອິສຣະຈະໄດ້ອານິສົງສ໌ຜົລປະໂຍຊນ໌ນີ້ທຸກກົພທຸກຊາຕິຈຳໄວ້ເດີ້ ນີ້ຂໍ້ທີ່ ໑ ເດີ້

ຂໍ້ທີ່ ໔ ພຣະສົງຄ໌ທີ່ຖືສຸດົງຄ໌ໃຊ້ຜ້າໄຕຣຈີວຣ ໓ ຜືນນີ້ໄປໃສມາໃສກໍຕ້ອງໃຫ້ຕິດຕົວຢູ່ສເມີ ເຫມືອນຢ່າງພຣະ ໓໐ ທ່ານ ທີ່ກ່າວເຖິງເມື່ອຕະກີ້ນີ້ ຈີວຣນີ້ເກົ່າກໍເກົ່າຫນັກກໍຫນັກແລະກໍເປື້ອນນຳ ຖ້າຈະມີຄວາມຄຶດຂຶ້ນມາວ່າເອົາວາງໄວ້ບ່ອນນີ້ດີກວ່າເຮົາຈະໄດ້ສບາຍໆ ກໍບໍ່ໄດ້ ຜ້າ ໓ ຜືນຕ້ອງຕິດຕົວໄປສເມີ **ເຫັນບໍ່ນີ່!** ຖ້າຫາກວ່າມີຍາຕິໂຍມມາທອດກຖິນ ພຣະສົງຄ໌ກໍໄດ້ເຮັດພິທີອນຸໂມທນາຜ້າກຖິນນັ້ນແລ້ວຍ່ອມໄດ້ຮັບອານິສົງສ໌ເຖິງ ໕ ເດືອນ ຜ້າສາມຜືນນີ້ ຈີວຣມັນຫນັກຂໍຝາກໄວ້ທີ່ວັດ **ຝາກໄວ້ທີ່ຍາຕິໂຍມແດ່ໄດ້ບໍ່? ໄດ້!** ເຫັນບໍ່ ບໍ່ອາບັຕິ ຈີວຣຂອງເຮົາ ໓ ຜືນນີ້ ຜືນໃດຜືນນຶ່ງຝາກໄວ້ທີ່ວັດກໍໄດ້ ຝາກໄວ້ທີ່ໃຜກໍໄດ້ ຝາກໄວ້ບ່ອນໃດກໍໄດ້ ຫຼືເຮົາຈະໄປທີ່ໃດທີ່ນຶ່ງໂດຍໃຊ້ຜ້າ

ພຽງສອງຜືນໄປເບົາໆ ສບາຍໆ ແມ່ນບໍ່ ໄປໄດ້ເປັນເວລາເຖິງ ໕ ເດືອນ ທີ່ມີອານິສົງສ໌ຜົລປະໂຍຊນ໌ຢ່າງນີ້ກໍເພາະກະຖິນນີ່ແຫລະ **ມີຜົລປະໂຍຊນ໌ເຖິງ ໕ ເດືອນຢ່າງແນ່ນອນ** ໃຜເຮັດໃຫ້ພຣະສົງໝ໌ມີຄວາມສະດວກສບາຍຢ່າງນີ້? **ກໍຄືເຈົ້າພາພຜູ້ທີ່ຖວາຍກະຖິນນີ່ແຫລະເຮັດໃຫ້ພຣະສົງໝ໌ ເອົາຜ້າຝາກໄວ້ທີ່ໃດທີ່ນຶ່ງໂດຍບໍ່ມີປັຍຫາໄປໄດ້ໂດຍບໍ່ມີອາບັຕິ!** ເພາະສະນັ້ນດັ່ງທີ່ເຮັດໃຫ້ພຣະສົງໝ໌ບໍ່ມີອາບັຕິ ຍາຕິໂຍມທັ້ງຫລາຍຜູ້ທີ່ໄດ້ຖວາຍຜ້າກະຖິນນີ້ກໍຈະໄດ້ມີອານິສົງສ໌ຜົລປະໂຍຊນ໌ ວ່າຊັພຍ໌ສົມບັຕິຂອງທ່ານສິ່ງຂອງໆທ່ານຈະຝາກໄວ້ບ່ອນໃດກໍຍ່ອມໄດ້ແລະປລອດກັຍດ້ວຍ ໄວ້ບ່ອນໃດກໍບໍ່ມີອັນຕຣາຍ ໄປໃສມາໃສກໍຍ່ອມບໍ່ຫນັກ ບໍ່ຫນັກກໍຄືຈະເຮັດການງານອີຫຍັງກໍແລ້ວແຕ່ຈະບໍ່ລຳບາກ ມີຫນ້າທີ່ການງານຈະເຮັດຢ່າງໃດຢ່າງນຶ່ງກໍເຮັດໄດ້ດ້ວຍຄວາມສະດວກສບາຍແລະເບົາ ເຫມືອນພຣະທີ່ບໍ່ຕ້ອງເອົາຈີວຣທີ່ຫນັກວາງໄວ້ເທິງບ່າ ຍາຕິໂຍມທັ້ງຫລາຍຈະບໍ່ໄດ້ຫນັກໃຈບໍ່ໄດ້ລຳບາກ ຢູ່ສະດວກສບາຍໄປມາສະດວກສບາຍ ຢາກໄປໃສກໍໄປໄດ້ຢ່າງສະດວກສບາຍບໍ່ມີອີຫຍັງຂັດຂ້ອງ ຈະໄດ້ອານິສົງສ໌ຜົລປະໂຍຊນ໌ນີ້ທຸກກົພທຸກຊາຕິໄປ ບໍ່ແມ່ນສະເພາະຊາຕິນີ້ໄດ໋! ເພາະຫຍັງ? ເພາະເຮົາເຮັດໃຫ້ພຣະສົງໝ໌ເດີນທາງດ້ວຍມີຄວາມສະດວກສບາຍ ຄືທ່ານຈະວາງຜ້າໄຕຣຈີວຣໄວ້ບ່ອນໃດກໍບໍ່ເປັນອາບັຕິ ເຮົາຝາກຊັພຍ໌ສົມບັຕິຂອງເຮົາໄວ້ກັບໃຜກໍບໍ່ມີໃຜໂກງແລະຂີ້ຕົ໊ວດອກ ເຫມືອນຢ່າງວ່າຝາກໄວ້ແດ່ເດີ້ແລ້ວເຂົາກໍບໍ່ຄືນເຮົາຈະບໍ່ມີກໍຣະນີແບບນີ້ ຝາກໄວ້ບ່ອນໃດກໍຍ່ອມປລອດກັຍ ໃນທຳນອງດຽວກັນຍາຕິໂຍມທີ່ໄດ້ທອດກະຖິນຖວາຍກໍຍ່ອມໄດ້ຮັບຄວາມສະດວກສບາຍຈະໄດ້ຜົລປະໂຍຊນ໌ຢ່າງນີ້

ແລ້ວກໍຂໍ້ທີ່ ລ "ອັນນີ້ໃຫ້ລາຕີໂຍມຈຳໄວ້ເດີ້" ຖ້າຫາກວ່າພຣະສົງພໍໄປຂໍອາຫານຈາກລາຕີໂຍມ ອົງຄ໌ນີ້ກໍຂໍອົງຄ໌ນັ້ນກໍຂໍ ຂໍແລ້ວກໍໄປລົບດ້ວຍກັນ ໔ ອົງຄ໌ຫຼື ໔ ອົງຄ໌ຂຶ້ນໄປ *ທຸກໆ ເທື່ອທີ່ຄົງອກັດຕາຫານນັ້ນຍ່ອມເປັນອາບັດທຸກເທື່ອໆ ແຕ່ທີ່ນີ້ຈະມີຢູ່ຊ່ວງນຶ່ງຫລັງຈາກອອກພັຮສາຈົນເຖິງວັນລອຍກະທົງ ໑ ເດືອນນີ້*ເປັນເວລາທີ່ພຣະສົງພໍປະຊຸມກັນເປັນຮ້ອຍໆ ພັນໆ ຊ່ວຍກັນຍິບຜ້າຍ້ອມຜ້າ ຕອນນີ້ພຣະສົງພໍກໍ busy ແມ່ນບໍ່? ແລະພຣະສົງພໍກໍຫຼາຍ ອາຫານກໍບໍ່ພໍ ຈະເຮັດແນວໃດ? ກໍຕ້ອງຂໍ! ***"ຂໍໄດ້" ຄື***ຮົາຂາດອາຫານຂໍອາຫານຫນ່ອຍດຽວ ອົງຄ໌ນັ້ນກໍຂໍອົງຄ໌ນີ້ກໍຂໍ ຂໍກໍບໍ່ເປັນຫຍັງ ເພາະໃນຊ່ວງນີ້ອນຸໂລມໄດ້ເພາະພຣະສົງພໍເຂົາມີຫນ້າທີ່ມາກກັບຜ້າກາຍໃນ ໑ ເດືອນບໍ່ເປັນອາບັດ ຖ້າຫາກໄດ້ທອດກກິນໄປຈະເປັນແນວໃດເດ້ ຄືບໍ່ແມ່ນສະເພາະເດືອນ ໑ ເທົ່ານັ້ນ ຈະເພີ່ມຂຶ້ນອີກເຖິງ ໕ ເດືອນ ນີ້ຄືຄວາມຫມາຍຂອງຄຳວ່າ "***ກຣານກກິນ***" ຄືເຮັດໃຫ້ມີອານິສົງສ໌ຜົລປະໂຍຊນ໌ຈາກເດືອນນຶ່ງຂຍາຍກວ້າງອອກໄປເຖິງ ໕ ເດືອນ ***"ພຣະຂໍໄດ້"*** ....ອີກປະການນຶ່ງກໍຄື ຖ້າລາຕີໂຍມທັ້ງຫລາຍປາກຈະຖວາຍກັດຕາຫານແກ່ພຣະສົງພໍ ຖ້າໃຊ້ສັພທ໌ບໍ່ຖືກໃຊ້ສັພທ໌ບໍ່ສຸກາພ ບໍ່ຮູ້ຈັກໃຊ້ສັພທ໌ທີ່ເຫມາະສົມກັບພຣະສົງພໍກັບວິນັຍ ພຣະໄປລົບກັດຕາຫານກໍເປັນອາບັດ ເຊັ່ນບາງປະເທສບາງທ້ອງຖິ່ນນັ້ນຖ້າມີກິຈນິມົນຕ໌ພຣະເຈົ້າກາພເຂົາຈະບໍ່ນິມົນຕ໌ເອງເວົ້າເອງເພາະຢ້ານວ່າເວົ້າບໍ່ຖືກ ເຂົາກໍໃຫ້ມັຄທາຍົກທີ່ຮູ້ກ່ຽວກັບສາສນາວັດວາອາຣາມກັບພຣະສົງພໍພຣະວິນັຍນິມົນຕ໌ແທນ ຜູ້ນັ້ນກໍເປັນຕົວແທນໄປອາຣາຮນາພຣະສົງພໍ ລາຕີໂຍມຄົງເຄີຍໄດ້ເຫັນໄດ້ຍິນແມ່ນບໍ່? ບາງທ້ອງຖິ່ນບາງປະເທສນັ້ນຕ້ອງມີເຈົ້າຫນ້າທີ່ທຳກິຈນິມົນຕ໌ໂດຍສະເພາະເພາະຫຍັງ *ຫາກໃຊ້ຄຳວ່າມາກິນຕຳຫມາກຮຸ່ງ ມາກິນເຂົ້າ ມາກິນເຂົ້າປຸ້ນ ມາກິນເຝີທີ່ບ້ານ ຄຳເວົ້າແບບນີ້ຈະເປັນ*

*ອາບັຕິແກ່ພຣະສົງຜ໌ທີ່ໄປຈັນ* ເພາະສະນັ້ນຕ້ອງຮູ້ຈັກໃຊ້ສັພທ໌ໃຫ້ຖືກວ່າ "ຂໍອາຣາສນາພຣະສົງຜ໌ໄປຈັນກັຕຕາຫາຣທີ່ບ້ານໃນວັນມື້ອື່ນນີ້" ***...ບໍ່ຄວຣໃຊ້ຄຳວ່າ*** *"ເຂົ້າປຸ້ນ ຫຼືວ່າຕຳຫມາກຮຸ່ງ ບໍ່ແມ່ນຄຳວ່າ ຊີ້ນ ປາ ເປັນຊີ້ນ ເປັນຂນົມໃຊ້ບໍ່ໄດ້"* ພຽງແຕ່ໃຫ້ໃຊ້ຄຳທີ່ຖືກຕ້ອງເຊັ່ນວ່າ "ຂໍອາຣາສນາພຣະຄຸຓເຈົ້າໃຫ້ໄປຈັນ ***ຈັງຫັນ*** (ຖວາຍອາຫາຣເຊົ້າ) ***ເພລ*** (ຖວາຍອາຫາຣກາງວັນ) ຢ່າໃຊ້ຄຳວ່ານິມົນຕ໌ໃຫ້ໄປ **ຈັນໄກ່ ຈັນປາ ຫຼື ຈັນເຝີ, ເຂົ້າປຸ້ນ, ຫຼືແຮມເບີຣ໌ເກອຣ໌ນີ້** ***"ບໍ່ໄດ້ແທ້ໆ!"*** ສະນັ້ນຕ້ອງຮຽນຮູ້ເຣື່ອງວັດເຣື່ອງພຣະວິນັຍໄວ້ ຖ້າໃຊ້ສັພທ໌ຢ່າງນີ້ພຣະສົງຜ໌ທີ່ໄປຈັນຈຶ່ງບໍ່ອາບັຕິ **ອາບັຕິຄືເປັນພິษໄປຫຼືເປັນຍາພິษໄປ** ***ບໍ່ແມ່ນອາບັຕິຊື່ໆ ສາມາຖຕົກໄປໃນອບາຍພູມິດ້ວຍ*** ເພາະຫຍັງ? ເພາະລ່ວງເກີນພຣະວິນັຍແມ່ນບໍ່?! ເພາະສະນັ້ນຍາຕິໂຍມທັ້ງຫລາຍກໍຕ້ອງຮຽນຮູ້ໄວ້ ອີກປະກາຣນຶ່ງຈຳເປັນຕ້ອງຮຽນຮູ້ແລະປຕິບັຕິຕາມໄປດ້ວຍ ຖ້າຫາກຍາຕິໂຍມບໍ່ໄດ້ອາຣາສນາບໍ່ໄດ້ປວາຣຕາຕົວໄວ້ ຖ້າພຣະສົງຜ໌ໄປຂໍຍາຕິໂຍມຢ່າງໃດຢ່າງນຶ່ງ **ເປັນອາບັຕິ ຂໍບໍ່ໄດ້** ຕ້ອງເປັນໂຍມທີ່ປວາຣຕາຕັ້ງໄວ້ ຈຶ່ງ**ຈະຂໍໄດ້ ເຊັ່ນ**, ຖ້າພຣະຄຸຓເຈົ້າມີອີຫຍັງຕ້ອງການອີຫຍັງກ່ຽວກັບປັຈຈັຍ ໔ (ບໍ່ແມ່ນຢ່າງອື່ນເດີ້ ບໍ່ແມ່ນຄອມພິວເຕີຣ໌ບໍ່ແມ່ນຣົຖເດ້) ຕ້ອງເປັນປັຈຈັຍ ໔ **ຮູ້ບໍ່ວ່າປັຈຈັຍ ໔ ຄືຫຍັງ?** ຄື: ມີ ເຂົ້າປາອາຫາຣນ້ຳປານະ, ຜ້າໄຕຣຈີວຣ, ທີ່ຢູ່ອາສັຍ, ຢາຮັກษາໂຣຄ ***໔ ປະການນີ້ເອີ້ນວ່າ "ປັຈຈັຍ ໔"*** ຖ້າທ່ານຕ້ອງການຍາມໃດກໍໃຫ້ບອກຍາຕິໂຍມທີ່ປວາຣຕາໄວ້ວ່າ ຖ້າທ່ານຕ້ອງການຍາມໃດກໍໃຫ້ບອກມາທີ່ຂ້າພເຈົ້າ ຫຼືຂນ້ອຍ ຫຼືຂນ້ອຍປວາຣຕາໄວ້ວ່າ ທ່ານຕ້ອງການອີຫຍັງກໍໃຫ້ບອກມາຈະຈັດຖວາຍໃຫ້ ເມື່ອພຣະສົງຜ໌ບອກໂຍມວ່າອາຕມາຕ້ອງການຜ້າສບົງ ຕ້ອງການອາຫາຣ ຕ້ອງການນ້ຳປາເດີ້ ຕ້ອງການຢາຮັກษາໂຣຄ

ຕ້ອງການອາສນະ ຕ້ອງການຜ້າປູທີ່ນັ່ງທີ່ນອນ ກໍຣຕີຢ່າງນີ້ບອກຍາຕິໂຍມໄດ້ ***ເພາະຍາຕິໂຍມປວາຣຕາຕົວໄວ້ແມ່ນບໍ່?!*** ບໍ່ເປັນອາບັຕິ ຖ້າໂຍມບໍ່ໄດ້ປວາຣຕາໄວ້ ອາຕມາບອກວ່າຢາກຈະໄດ້ Tylenol ສັກຂວດ ***ຖ້າອາຕມາວັນຍານັ້ນໄປກໍເປັນອາບັຕິເຫັນບໍ່ນີ້!*** ພຣະສົງຄ໌ກໍຕ້ອງຮູ້ ຍາຕິໂຍມເອງກໍຕ້ອງຮູ້ວ່າຄວຣຈະເຮັດແນວໃດ ອັນນີ້ສຳຫຼັບຄວາມຮູ້ແລະຈຳເປັນດ້ວຍ **ເພາະສະນັ້ນຖ້າຍາຕິໂຍມບໍ່ສລາດພຣະກໍເປັນອາບັຕິ** ອັນນີ້ຄືຄວາມຮູ້ກ່ຽວກັບການວັນ ສຳຫຼັບຍາຕິໂຍມທັ້ງຫລາຍທີ່ຖວາຍກັຕຕາຫາຣໄປ ທີ່ຖວາຍຜ້າກຖິນໄປພຣະສົງຄ໌ກໍໄດ້ອານິສົງສ໌ຜົລປະໂຍຊນ໌ນີ້ແຫລະ ໄປຂໍເກີນກວ່າ ໔ ອົງຄ໌ໄປຂໍເຂົ້າປາອາຫາຣກໍບໍ່ເປັນຫຍັງ ຫຼືຍາຕິໂຍມນິມົນຕ໌ວ່າມື້ອື່ນນີ້ຢາກຈະຖວາຍເຂົ້າປາອາຫາຣ ເຂົ້າປຸ້ນ ເຝີ ຢ່າງນີ້ເປັນຕົ້ນ ໂດຍໃຊ້ສັພທ໌ທີ່ບໍ່ຖືກແບບນີ້ກໍຕາມສຳຫຼັບ ໕ ເດືອນບໍ່ເປັນອາບັຕິ ຄິດເບິ່ງເດີ້ ໕ ເດືອນບໍ່ອາບັຕິຈົນເຖິງປີຫນ້າພຸ້ນລະເດືອນ ໔ ຂຶ້ນ ໑໕ ຄ່ຳສຸດທ້າຍແນ່ນອນ ດັ່ງທີ່ກຖິນນີ້ຫມາຍເຖິງວ່າ **ແນ່ນອນມັ່ນຄົງມີຜົລປະໂຍຊນ໌ແນ່ນອນ** ຈະເວົ້າແນວໃດກໍໄດ້ ຈະບໍ່ສຸກາພກໍບໍ່ເປັນຫຍັງພາຍໃນ ໕ ເດືອນນີ້ ພຣະທີ່ຮັບກຖິນ ແລະອນຸໂມທນາກຖິນນີ້ໄປວັນໄດ້ບໍ່ເປັນອາບັຕິ ***ແລ້ວໃຜເຮັດໃຫ້ບໍ່ອາບັຕິ!*** ກໍຍາຕິໂຍມທີ່ຖວາຍຜ້າກຖິນນີ້ແຫລະເຮັດໃຫ້ພຣະສົງຄ໌ມີຜົລປະໂຍຊນ໌ເຖິງ ໕ ເດືອນ ພຣະສົງຄ໌ບໍ່ສາມາຖທີ່ຈະຕັດອອກປ່ຽນແປງພຣະພຸທສບັນຍັຕິ ເພາະພຣະພຸທສເຈົ້າໄດ້ບັນຍັຕິໄວ້ຢ່າງຮຽບຮ້ອຍແລ້ວ ຍາຕິໂຍມສາມາຖເຮັດໃຫ້ພຣະສົງຄ໌ມີຄວາມສະດວກສບາຍວັນກັຕຕາຫາຣໂດຍບໍ່ມີໂທษບໍ່ມີອາບັຕິ ເພາະຢ່າງນີ້ເຈົ້າກາພຜູ້ທີ່ຖວາຍກຖິນນີ້ຈະໄດ້ມີຜົລປະໂຍຊນ໌ແນວໃດທີ່ນີ້ "***ເຣື່ອງເຂົ້າປາອາຫາຣ ຈະຮັບປະທານອີຫຍັງກໍແລ້ວແຕ່ບໍ່ມີອັນຕຣາຍຫຍັງ ບໍ່ມີອັນຕຣາຍກ່ຽວກັບເຂົ້າປາອາຫາຣ***" ບາງຄົນຄິດວ່າກິນໄປແລ້ວຈະ

ປວດທ້ອງ ກິນໄປມັນບໍ່ຖືກກັບສຸຂະພາພຂອງຕົວເອງຢ່າງນີ້ເປັນຕົ້ນ ຜູ້ທີ່ເຄີຍເປັນເຈົ້າພາພກກິນນີ້ ຈະທານອີຫຍັງກໍທານໄປໄດ້ບໍ່ມີປັນຫາເນື່ອງຈາກເຂົ້າປາອາຫາຣ ອີກປະການນຶ່ງສມັຍນີ້ກໍມີແມ່ນບໍ່? ຄົນເສກຕະປູ ຫຼືເສກຜົມໃສ່ໃນທ້ອງ.. ***ເຂົາເອີ້ນອີຫຍັງ? ໄສຍສາສຕຣ໌ແມ່ນບໍ່!*** ເສກຂອງເຂົ້າໄປໃນທ້ອງ ແລ້ວກໍປວດທ້ອງບໍ່ສບາຍ ***ເຫັນບໍ່!*** ຜູ້ທີ່ຖວາຍກກິນນີ້ເຮັດໃຫ້ພຣະສົງຄ໌ກ່ຽວກັບເຂົ້າປາອາຫາຣນີ້ບໍ່ມີໂທษບໍ່ເປັນອາບັຕິຫຍັງ ຜູ້ນັ້ນຈະບໍ່ມີປັນຫາເຣື່ອງນີ້ ບໍ່ມີໃຜຈະເສກຕະປູ ເສກຜົມໃສ່ໄປໃນທ້ອງຂອງເຂົາໄດ້ ບໍ່ຖືກເສນ່ຫ໌ ບໍ່ຖືກຂອງທຸກກົພທຸກຊາຕິ ເພາະສະນັ້ນຄົນເຮົານີ້ທຳແນວໃດກໍຈະໄດ້ຢ່າງນັ້ນເຮັດໃຫ້ພຣະສົງຄ໌ ມີຄວາມສະດວກສບາຍບໍ່ເປັນອາບັຕິບໍ່ມີໂທษໃນເຣື່ອງເຂົ້າປາອາຫາຣ ໂຍມເອງກໍຮັບປະທານອີຫຍັງກໍໄດ້ ບາງຄົນຢາກຮັບປະທານອັນນັ້ນກໍບໍ່ໄດ້ອັນນັ້ນກໍບໍ່ໄດ້ ສິ່ງທີ່ຕ້ອງການທ່ານໝໍກໍທັກທ້ວງຫ້າມວ່າທານບໍ່ໄດ້ ເພາະບໍ່ເໝາະກັບສຸຂະພາພຢ່າງນີ້ເປັນຕົ້ນ ແຕ່ຖ້າເຄີຍຖວາຍກກິນຢ່າງນີ້ບໍ່ຕ້ອງຫ່ວງເຣື່ອງເຂົ້າປາອາຫາຣ ຈະຮັບປະທານອີຫຍັງກໍໄດ້ບໍ່ມີໂທษອີຫຍັງທັ້ງສິ້ນ ແຕ່ແນວໃດກໍຕາມ ຢ່າຕາມໃຈປາກຈະດີກວ່າ

ແລ້ວກໍຂໍ້ທີ່ ໔ ຜົລປະໂຍຊນ໌ທີ່ຖວາຍຜ້າກກິນຂໍ້ທີ່ ໔ ກໍຄືເຊັ່ນວ່າສົມມະດາງອາຕມາກໍມີຜ້າໄຕຣຈີວຣຢູ່ແລ້ວແມ່ນບໍ່? ແຕ່ລາຕີໂຍມກໍຢາກຖວາຍອາຕມາອີກຊຸດ ໑ ຖ້າຖວາຍໃຫ້ແກ່ອາຕມາ ອາຕມາກໍຕ້ອງທຳອະທິษຖານ ມັນມີຢູ່ໃນພຣະວິນັຍສົງຄ໌ ໒໒໗ ຂໍ້ ຄືຕ້ອງໃຫ້ອະທິษຖານຜ້ານັ້ນແລະເກັບໄວ້ໄດ້ພຽງ ໑໐ ວັນ ຖ້າເກີນ ໑໐ ວັນແລ້ວໃຊ້ບໍ່ໄດ້ແລ້ວ ຕ້ອງໃຫ້ຜູ້ອື່ນໄປ ຕ້ອງຖິ້ມ ຕ້ອງສລະສິທຮິ໌ໄປ ມັນຈະມີຢູ່ ໔ ປະການ ຕ້ອງອະທິษຖານ ...ເຊັ່ນອາຕມາອະທິษຖານວ່າ ຂ້ອຍອະທິษຖານຜ້ານີ້ ***ອະທິษຖານກໍຄືຈະໃຊ້ຜ້ານີ້ໂດຍມີຄວາມ***

***ເຄາຣົພ*** ໑໐ ວັນເກັບໄວ້ໄດ້ ຈະໃຊ້ຍາມໃດກໍໄດ້ບໍ່ໃຊ້ກໍບໍ່ເປັນຫຍັງແຕ່ຖ້າເກີນ ໑໐ ວັນບໍ່ໄດ້ຕ້ອງຖິ້ມ ອີກປະການນຶ່ງກໍຄືຕ້ອງມອບໃຫ້ພຣະອົງຄ໌ໃດອົງຄ໌ນຶ່ງໄປ ຕາມພຣະວິນັຍຖ້າຫາກວ່າພຣະສົງຄ໌ອົງຄ໌ນັ້ນກໍມີຈີວຣຫຼາຍພໍແລ້ວ ກໍວ່າເອີ້, ຈີວຣນີ້ຂນ້ອຍຂໍມອບຄືນໃຫ້ທານຕໍ່ ຂໍໃຫ້ທ່ານໃຊ້ຕາມອັສຍາສັຍເພາະສລະສິທສິ໌ໄປແລ້ວ ກໍໃຊ້ຕໍ່ໄດ້ມັນບໍ່ກ່ຽວກັບ ໑໐ ວັນແລ້ວຕອນນີ້ ເພາະເປັນໂມຄະໄປແລ້ວ ຖ້າເຮົາບໍ່ອະທິຖານບໍ່ທຳຕາມພຣະວິນັຍສົງຄ໌ ຖ້າເກັບໄວ້ເກີນ ໑໐ ວັນນີ້ເປັນອາບັຕິ ແຕ່ວ່າຖ້າເຮົາໄດ້ຮັບກາກິນອນຸໂມທນາກາກິນແລ້ວບໍ່ອາບັຕິພຣະສົງຄ໌ຈະຮັບກາກິນໄດ້ ທີນີ້ກໍຈຳໄວ້ເດີ້ ພຣະສົງຄ໌ຕ້ອງຈຳພັຣສາ ໓ ເດືອນຄົບບໍຣິບູຣຕ໌ໄຕຣມາສຈຶ່ງຈະຮັບກາກິນໄດ້ ຄືຕັ້ງແຕ່ວັນອາສາລຫບູຊານີ້ນຶ່ງແລ້ວກໍເຂົ້າພັຣສາແມ່ນບໍ່? ຖ້າຫາກວ່າພຣະສົງຄ໌ມີພັຣສາຂາດໄປ ເພາະເດີນທາງໄປທີ່ອື່ນເກີນ ໗ ວັນ ຖ້າຢ່າງນີ້ຮັບກາກິນບໍ່ໄດ້ຕ້ອງຄົບ ໓ ເດືອນ ເມື່ອຄົບ ໓ ເດືອນແລ້ວຕ້ອງທຳການປວາຣຕາ ເວລາພຣະສົງຄ໌ຈະກຣານກາກິນທຳສັງຄກັມມ໌ ພຣະສົງຄ໌ກໍຕ້ອງກ່າວອນຸໂມທນາສາທຸດ້ວຍ ຜູ້ທີ່ໄດ້ອນຸໂມທນາກາກິນນີ້ແຫລະຈຶ່ງຈະໄດ້ຜົລປະໂຍຊນ໌ອານິສົງສ໌ເຖິງ ໕ ເດືອນ ມີໃຜຈະມາຖວາຍຈີວຣຈັກຊຸດກໍໄດ້ ໑໐໐ ຊຸດ ໑໐໐໐ ຊຸດກໍໄດ້ເກັບໄວ້ໄດ້ເຖິງ ໕ ເດືອນບໍ່ເປັນອາບັຕິ **ບໍ່ອາບັຕິເດີ້** ເກັບໄວ້ໄດ້ໃຜຈະຖວາຍເທົ່າໃດກໍເກັບໄວ້ໄດ້! ***ບໍ່ເປັນອາບັຕິ!*** ປົກຕິສັມມະດາເກັບໄວ້ໄດ້ຈັກວັນ? ໑໐ ວັນແມ່ນບໍ່? ແຕ່ຖ້າອອກພັຣສາໄປຈົນເຖິງວັນລອຍກະທົງເປັນເວລາ ໑ ເດືອນ ກໍຄືຜ້າທີ່ຍັງບໍ່ສຳເຣັຈຮູປຄົນນັ້ນກໍຖວາຍຄືບ ໑ ສອກ ໑ ວາ ໑ ພຣະສົງຄ໌ກໍເກັບໆ ໄວ້ໄດ້ພາຍໃນ ໑ ເດືອນ ຖ້າບໍ່ທອດກາກິນເດີ້ ຖ້າທອດກາກິນໄປຈົນເຖິງເດືອນ ໔ ຂຶ້ນ ໑໕ ຄ່ຳ ໕ ເດືອນນີ້ບໍ່ອາບັຕິເລີຍຮັບຈີວຣໄດ້ທັງນັ້ນ ອັນນີ້ຍາຕິໂຍມເຮັດໃຫ້ພຣະສົງຄ໌ມີສິທສິ໌ມີໂອກາສຮັບຈີວຣໄດ້ເຖິງ ໕

ເດືອນໂດຍບໍ່ມີອັນຕຣາຍຫຍັງ ບໍ່ເປັນອາບັຕິບໍ່ມີໂທษອີຫຍັງ ສ່ວນເຈົ້າກາພທັ້ງຫລາຍຈະໄດ້ຮັບຜົລປະໂຍຊນ໌ແນວໃດທີ່ນີ້! ຜູ້ທີ່ຖວາຍກຖິນນີ້ຊັພຍ໌ສົມບັຕິຂອງຕົນທີ່ຕົນເກັບໄວ້ບ່ອນໃດກໍແລ້ວແຕ່ ສນາຄາຣກໍແລ້ວແຕ່ເກັບໄວ້ທີ່ບ້ານຫຼືຝັງໄວ້ທີ່ໃດທີ່ນຶ່ງຈະບໍ່ມີກັຍອັນຕຣາຍ ຍ່ອມບໍ່ມີອັນຕຣາຍ ສັຕຣູ ໕ ປະກາຣຍ່ອມເອົາໄປບໍ່ໄດ້ ສັຕຣູ ໕ ປະກາຣຄືຫຍັງ? ຄື: ***໑. ເຈົ້າຫນ້າທີ່ບ້ານເມືອງບໍ່ສາມາຖຈະຍຶດໄປໄດ້ ໒. ນ້ຳບໍ່ຖ້ວມ ໓. ໄຟບໍ່ໄຫມ້ ໔. ບໍ່ມີໂຈຣບໍ່ມີຂໂມຍເອົາໄປໄດ້ ໕. ລູກຫລານຍາຕິພີ່ນ້ອງຂອງຕົນບໍ່ສາມາຖເອົາໄປໄດ້ ບໍ່ສາມາຖຈະເຮັດລາຍໄດ້*** ສັຕຣູ ໕ ປະກາຣບໍ່ສາມາຖທຳລາຍຊັພຍ໌ສົມບັຕິຂອງເຮົາໄດ້ ຄົນເຮົາທຳມາຫາກິນກໍໄດ້ເງິນໄດ້ທອງ ໄດ້ຊັພຍ໌ສົມບັຕິຫຼວງຫຼາຍມີເພັຊຣ໌ນິລຈິນດາຫຼວງຫຼາຍ ເດີ໋ຍວຣັຖບາລກໍຍຶດໄປກໍມີ ບາງທີ່ກໍນ້ຳຖ້ວມໄປ ບາງທີ່ໄຟໄຫມ້ກໍມີ ບາງຄົນກໍເຈັບປ່ວຍເສັຽຄ່າຍາ ຄ່າຫມໍຫຼາຍໄປ ບາງຄົນກໍມີໂຈຣປລົ້ນໄປ ບາງເທື່ອກໍໃຫ້ຄົນໃດຄົນນຶ່ງຢືມໄປເຂົາກໍບໍ່ໃຫ້ຄືນເຮົາກໍມີ ບາງເທື່ອເຮົາເກັບໄວ້ລູກຫລານກໍເອົາໄປໃຊ້ຈ່າຍເສັຽຫມົດ ສ່ວນຜູ້ທີ່ເຄີຍຖວາຍຜ້າກຖິນນີ້ອານິສົງສ໌ຂອງກາຣຖວາຍຜ້າກຖິນນີ້ ເພາະເຮັດໃຫ້ພຣະສົງຆ໌ເກັບຜ້າໄຕຣຈີວຣໄດ້ເຖິງ ໕ ເດືອນຈົນບໍ່ມີໂທษບໍ່ມີອາບັຕິ ເພາະສະນັ້ນເຈົ້າກາພທັ້ງຫລາຍຈະເກັບຮັກษາຊັພຍ໌ສົມບັຕິເງິນທອງຂອງຕົນໄວ້ຍ່ອມບໍ່ມີກັຍັນຕຣາຍ ສັຕຣູທຳລາຍບໍ່ໄດ້ໃນທຸກກົພທຸກຊາຕິໄປ ອັນນີ້ຄືຜົລປະໂຍຊນ໌ອານິສົງສ໌ຂໍ້ທີ່ ໔ ແລະອານິສົງສ໌ຜົລປະໂຍຊນ໌ຂໍ້ທີ່ ໕

ຂໍ້ທີ່ ໕ ກໍຄື ເຊັ່ນວ່າເຮົາຢູ່ທີ່ນີ້ ເຮົາຍັງບໍ່ໄດ້ທອດກຖິນແມ່ນບໍ່? ມີໂຍມທ່ານນຶ່ງກໍມາຖວາຍຈີວຣ ໑໐ ຊຸດ ອັນນີ້ຄືເປັນຕົວຢ່າງເດີ້ ສົມມຸຕິມີອາຄັນຕຸກະຈາກລອສແອນເຈລິສ ໕ ອົງຄ໌ມາເຖິງທີ່ນີ້ ຍາຕິໂຍມກໍຂໍຖວາຍຜ້າໄຕຣຈີວຣໃຫ້ແກ່ພຣະສົງຆ໌ຖວາຍໃຫ້ເປັນ

ສັງຆທານ ທັ້ງພຣະສົງຄ໌ທີ່ຢູ່ໃນວັດແລະອາຄັນຕຸກະທີ່ມາຈາກລອສແອນເຈລິສມາ ໕ ອົງຄ໌ນັ້ນ ຈະຕ້ອງມີການແບ່ງປັນຜ້າໄຕຣຈີວຣທີ່ຍາຕິໂຍມຖວາຍເປັນສັງຆທານນັ້ນ ແຕ່ຖ້າຫາກວ່າຫລັງຈາກໄດ້ທອດກຖິນໄປແລ້ວໂຍມກໍໄດ້ມາຖວາຍຜ້າໄຕຣຈີວຣ ຈະເປັນຮ້ອຍຊຸດພັນຊຸດກໍແລ້ວແຕ່ ຄລ້າຍໆ ທຳເປັນສັງຆທານເຫມືອນກັນ ໃຫ້ສຳຫຼັບພຣະສົງຄ໌ທີ່ໄດ້ຈຳພັຣษາແລະໄດ້ຜ້າກຖິນແລ້ວນັ້ນ ເຫມືອນຢ່າງວ່າທີ່ວັດນີ້ເຮົາມີພຣະທັ້ງຫມົດ ៧ ອົງຄ໌ແມ່ນບໍ່? ແລະຍາຕິໂຍມກໍຖວາຍຜ້າມາເປັນຮ້ອຍຊຸດ ເຖິງແມ້ມີຈີວຣຫຼວງຫຼາຍພຣະເຮົາບໍ່ແບ່ງປັນໃຫ້ອາຄັນຕຸກະກໍໄດ້ ນີ້ເປັນກົฎຫຼືພຣະວິນັຍຂອງພຣະສົງຄ໌ບໍ່ຕ້ອງໃຫ້ພຣະອາຄັນຕຸກະກໍໄດ້ ເພາະພຣະທີ່ໄດ້ຈຳພັຣษາໄດ້ຮັບກຖິນ ແມ້ໃຜຈະຖວາຍຜ້າໄຕຣຈີວຣເທົ່າໃດກໍແລ້ວແຕ່ ພຣະທີ່ຈຳພັຣษາຢູ່ທີ່ວັດຈະແບ່ງໃຫ້ພຣະອາຄັນຕຸກະກໍໄດ້ຫຼືບໍ່ໃຫ້ກໍໄດ້ **ນີ້ເປັນສິທສິຂອງພຣະທີ່ຈຳພັຣษາແລະໄດ້ຮັບກຖິນນັ້ນແຫລະ** ຄືທ່ານມີສິທສິ໌ຈັດການໃນສົມບັຕິໃນຜ້າຈີວຣນັ້ນ ***ມີຜົລປະໂຍຊນ໌ໄດ້ເຖິງຂນາດນີ້! ກໍຍາຕິໂຍມນັ້ນແຫລະເຮັດໃຫ້ພຣະສົງຄ໌ມີອຳນາຈຢ່າງນີ້!*** ແລ້ວຍາຕິໂຍມເຮົາຈະໄດ້ຮັບອານິສົງສ໌ຜົລປະໂຍຊນ໌ແນວໃດ? ຊັພຍ໌ສົມບັຕິຂອງເຈົ້າภาพທີ່ຖວາຍກຖິນນີ້ **ຖ້າເຮົາບໍ່ຢາກໃຫ້ໃຜ, ໃຜກໍບໍ່ສາມາຖຈະເອົາໄປໄດ້!** ຈຳໄວ້ເດີ້! ເຮົາບໍ່ຢາກໃຫ້ໃຜ ໃຜກໍບໍ່ສາມາຖເອົາໄປໄດ້ ແຕ່ຖ້າເຮົາອນຸຍາຕເຂົາເຖິງເອົາໄປໄດ້ ***ສ່ວນສມັຍນີ້ເປັນແນວໃດເດ້?*** ເຮົາບໍ່ອນຸຍາຕໃຫ້ເຂົາເຂົາກໍເອົາໄປແມ່ນບໍ່?! ຄົນນັ້ນເອົາໄປຄົນນີ້ເອົາໄປ ຖ້າເຮົາເຄີຍທອດກຖິນນີ້ຖ້າເຮົາບໍ່ໃຫ້ບໍ່ມີໃຜເອົາໄປບໍ່ໄດ້ ອັນນີ້ກໍເປັນຕົວຢ່າງງ່າຍໆ ໃນພຣະສັມມ໌ຄັມກີຣ໌ໄດ້ສແດງໄວ້ຢ່າງນີ້ ເມື່ອສມັຍພຸທສກາລພຸ້ນ ມີມຫາເສຖກີທ່ານນຶ່ງມີຊື່ວ່າ ***<u>ໂຊຕິກະມຫາເສຖກີ</u>*** ທ່ານນີ້ບ້ານທີ່ເຂົາຢູ່ບໍ່ແມ່ນສັມມະດາໆ ມີກຳແພງແກ້ວມີ

ກໍາແພງກະຈົກຢ່າງດີ ບ້ານກໍໃຫຍ່ໂຕມໂຫລາຣ ກໍມີມື້ນຶ່ງພຣະເຈົ້າພິມພິສາຣໄດ້ສເດັຈໄປ ຢ້ຽມບ້ານຂອງເສຖກີ ທີ່ພຣະມຫາກະສັຕຣິຍ໌ຢູ່ພຣະຣາຊວັງເຮັດດ້ວຍໄມ້ບໍ່ຫາຣູຫາຣາ ຖ້າທຽບກັບບ້ານເສຖກີແລ້ວ ສ່ວນບ້ານມຫາເສຖກີເຮັດດ້ວຍກະຈົກກໍມີມີແກ້ວກໍມີ ມີເພັຊຣ໌ກໍມີ ສວຍງາມໃຫຍ່ໂຕມໂຫລາຣເປັນຕາເບິ່ງຫຼາຍ ***ຕອນນັ້ນລູກຊາຍຂອງທ່ານຄືໃຜ? ຄືພຣະເຈົ້າອຊາຕສັຕຣູແມ່ນບໍ່? ອາຍຸກໍຍັງນ້ອຍ ລູກຊາຍຂອງພຣະເຈົ້າພິມພິສາຣກໍຄິດວ່າເປັນຫຍັງບ້ານຂອງມຫາເສຖກີຈຶ່ງໃຫຍ່ໂຕຍິ່ງໃຫຍ່ກວ່າພຣະຣາຊວັງຂອງເຮົາ! ຖ້າວັນເປັນມຫາກະສັຕຣິຍ໌ເຮົາຈະເອົາໃຫ້ໄດ້!*** ເຫັນບໍ່ຈິຕໃຈຂອງຣາຊກຸມາຣ ຕອນຍັງເດັກໄດ້ຄິດໄວ້ຢ່າງນັ້ນ ມື້ນຶ່ງຫລັງຈາກໄດ້ປລົງພຣະຊົນມ໌ພຣະຣາຊບິດາ ເມື່ອພຣະຣາຊບິດາໄດ້ສວັຄຄ໌ໄປ ພຣະເຈົ້າອຊາຕສັຕຣູກໍກລາຍເປັນມຫາກະສັຕຣິຍ໌ໄປ ຄວາມຄິດເມື່ອຕອນຍັງເດັກ ຄືຢາກຈະເອົາບ້ານຂອງທ່ານ ***ໂຊຕິກະມຫາເສຖກີ*** ມາເປັນພຣະຣາຊວັງຂອງຕົວເອງ ຈຶ່ງໄດ້ນໍາເອົາກອງທັພທຫາຣໄປຍຶດບ້ານເສຖກີ ຕອນນັ້ນມຫາເສຖກີກໍາລັງໄປເຂົ້າເຝົ້າພຣະພຸທສເຈົ້າໂດຍບັງເອີນແທ້ ຕອນນັ້ນບໍ່ໄດ້ຢູ່ທີ່ບ້ານ ກອງທັພຂອງພຣະເຈົ້າອຊາຕສັຕຣູກໍເຂົ້າໄປ ກໍາແພງທີ່ບ້ານເສຖກີກໍມີຫລາຍຊັ້ນ ມີກໍາແພງແກ້ວ ກໍາແພງກະຈົກຫລາຍໆ ຊັ້ນ ທຫາຣກໍໃຊ້ກໍາລັງຈະເຂົ້າບຸກເຂົ້າບ້ານຂອງທ່ານເສຖກີ ກໍາແພງກໍມີແຕ່ກະຈົກແກ້ວ ເຮັດໃຫ້ກອງທັພທຫາຣຂອງພຣະເຈົ້າອຊາຕສັຕຣູເຫັນວ່າທ່ານເສຖກີມີກໍາລັງພົລທຫາຣຫຼວງຫຼາຍ ເຫັນຈາກຫລາຍໆ ຊັ້ນຂອງກໍາແພງ ກອງທັພຂອງພຣະເຈົ້າອຊາຕສັຕຣູຈຶ່ງໄດ້ຖອຍທັພກລັບພຣະຣາຊວັງໄປບອກພຣະເຈົ້າອຊາຕສັຕຣູວ່າ ທ່ານມຫາເສຖກີມີກອງທັພຫຼວງຫຼາຍພວກເຮົາສູ້ບໍ່ໄດ້ກໍເລີຍຖອຍທັພອອກມາ ສ່ວນພຣະເຈົ້າອຊາຕສັຕຣູກໍໄດ້ສເດັຈໄປເຂົ້າເຝົ້າພຣະພຸທສເຈົ້າ

ເຊັ່ນກັນ ບັງເອີນໄດ້ໄປພົບກັບທ່ານມຫາເສຍກີຈຶ່ງໄດ້ຖາມທ່ານເສຍກີວ່າ ເປັນຫຍັງທ່ານເສຍກີມີກອງທັພຫຼວງຫຼາຍ ທ່ານເສຍກີຈຶ່ງໄດ້ຕອບວ່າຂນ້ອຍບໍ່ມີທຫາຣແລະບໍ່ມີກອງທັພເລີຍ ສ່ວນພຣະເຈົ້າອຊາຕສັຕຣູຈຶ່ງໄດ້ເວົ້າຄວາມຈິງວ່າຕັ້ງໃຈຈະໄປຍຶດບ້ານມຫາເສຍກີ ພວກນາຍທຫາຣທີ່ໄປບ້ານຂອງທ່ານເສຍກີໄດ້ບອກວ່າທ່ານເສຍກີມີທຫາຣຫຼວງຫຼາຍ ຕໍ່ສູ້ບໍ່ໄດ້ເຂົາກໍຫນີອອກມາ "***ຂນ້ອຍບໍ່ມີອີຫຍັງ***" ເຂົາບອກຍ້ຳອີກເທື່ອ! ທ່ານຮູ້ບໍ່ເຮົາຄືມຫາເສຍກີທີ່ມີບຸຄຍ່າງນຶ່ງຄື ***ຖ້າເຮົາບໍ່ໃຫ້ຂອງໆເຮົາແກ່ໃຜ ບໍ່ມີໃຜເອົາຊັພຍ໌ສົມບັຕິຂອງເຮົາໄປໄດ້*** ຄືຖ້າເຂົາບໍ່ຢາກໃຫ້ຂອງໆເຂົາກໍຈະບໍ່ມີໃຜໄປເອົາຂອງໆເຂົາໄດ້ **ພຣະເຈົ້າອຊາຕສັຕຣູວ່າແທ້ບໍ່?** ທ່ານເສຍກີຈຶ່ງຕອບວ່າແທ້ ຖ້າບໍ່ເຊື່ອກໍໃຫ້ລອງເບິ່ງ ຄືຕອນນັ້ນມຫາເສຍກີໃສ່ແຫວນເຕັມມືທັງ ໑໐ ນິ້ວ ນີ້ຄືແຫວນທີ່ຢູ່ໃນມື ຄືຂນ້ອຍບໍ່ຢາກໃຫ້ກໍເອົາບໍ່ໄດ້ ກໍທ່ານລອງເບິ່ງວ່າທ່ານຈະເອົາໄດ້ບໍ່? ພຣະເຈົ້າອຊາຕສັຕຣູກໍບໍ່ແມ່ນຄົນສັມມະດາໆ ເດີ້ ເຂົາກໍມີບຸຄວາສນາຍິ່ງໃຫຍ່ເຫມືອນກັນ ໃນພຣະຄັມກີຣ໌ຫຼືຕຳຣາໄດ້ບອກໄວ້ວ່າແນວໃດຮູ້ບໍ່? ຖ້າເຂົານັ່ງຢອງຢື້ຢ່າງນີ້ໃຊ້ກຳລັງຂອງເຂົາກະໂດດໄປ ສາມາຖກະໂດດໄດ້ເຖິງ ໖ ຕົ້ນຕາລອັນນີ້ຄືປຽບທຽບ ແຕ່ຖ້າເຂົາຢືນກໍສາມາຖກະໂດດຂຶ້ນໄດ້ສູງປະມາຕ ໗ ຕົ້ນຕາລ ກໍລອງຄຶດເບິ່ງກໍແລ້ວກັນ ຖ້ານັ່ງຢອງຢື້ໄດ້ ໖ ວາ ຖ້າຢືນກະໂດດໄດ້ ໗ ວາ ເຂົາມີພລະກຳລັງເຖິງຂນາດໃດເຖິງແມ້ນມີພລະກຳລັງປານນັ້ນເຂົາກໍຍັງບໍ່ສາມາຖດຶງເອົາແຫວນທີ່ຢູ່ໃນນິ້ວຂອງທ່ານເສຍກີໄດ້ ດຶງແນວໃດກໍບໍ່ໄດ້ໆ ***ຜູ້ມີກຳລັງເຖິງຂນາດນີ້ກໍຍັງເອົາບໍ່ໄດ້!*** ເພາະຫຍັງ? ເພາະມຫາເສຍກີນີ້ເຂົາເຄີຍຖວາຍຜ້າກຖິນໃນຊາຕິປາງກ່ອນ ຖ້າເຂົາບໍ່ຢາກໃຫ້ບໍ່ມີໃຜເອົາໄດ້ ເຫັນບໍ່ນີ້ ພຍາຍາມເອົາແນວໃດກໍບໍ່ໄດ້ ສຸດທ້າຍແລ້ວທ່ານເສຍກີເລີຍ

ບອກວ່າຕອນນີ້ເຮົາຈະໃຫ້ ໃຫ້ເອົາຜ້າມາຮອງຮັບ ພຣະເຈົ້າອຊາຕສັຕຣູກໍຢາກຈະລອງເບິ່ງຈຶ່ງໄດ້ເອົາຜ້າມາຮອງຮັບ ທ່ານເສຍກີຈຶ່ງໄດ້ເອົາມືທັ້ງສອງວາງລົງເທິງຫນ້າແຫວນກໍຕົກລົງເທິງຜ້າທັ້ງຫມົດເລີຍ ນີ້ຄືຖ້າບໍ່ຢາກໃຫ້ໃຜກໍເອົາໄປບໍ່ໄດ້ ອັນນີ້ກໍຄືຫລັກຖານ ໑ ເພາະສະນັ້ນຍາຕິໂຍມທັ້ງຫລາຍທີ່ຖວາຍຜ້າກຖິນນີ້ ຖ້າເຮົາຕ້ອງການບໍ່ໃຫ້ໃຜກໍບໍ່ມີໃຜຈະຂໂມຍເອົາຂອງເຮົາໄປໄດ້ ໃຜຈະໂກງເຮົາກໍໂກງບໍ່ໄດ້ ນີ້ກໍຄືຜົລປະໂຍຊນ໌ທີ່ຍາຕິໂຍມຄວຣຈະໄດ້ ອັນນີ້ຄືຜົລປະໂຍຊນ໌ຂໍ້ທີ່ ໕ ໃນຜົລປະໂຍຊນ໌ ໕ ປະການແມ່ນບໍ່? ຈໍາໄດ້ໄຫມ**ຜົລປະໂຍຊນ໌ ໕ ປະການສໍາຫຼັບພຣະສົງຂ໌**

ຂໍ້ທີ່ ໑ ຈະອອກໄປທາງນອກນອກວັດໂດຍບໍ່ຕ້ອງບອກໃຜກໍອອກໄປໄດ້ຕາມອິສຣະ

ຂໍ້ທີ່ ໒ ຜ້າໄຕຣຈີວຣ ໓ ຜືນນີ້ ຜືນໃດຜືນນຶ່ງບໍ່ຕ້ອງລໍາບາກຫນັກໃຈຈະຝາກໄວ້ບ່ອນໃດ ກໍຝາກໄດ້ໄປໄດ້ ບໍ່ເປັນອາບັຕິ

ຂໍ້ທີ່ ໓ ກ່ຽວກັບເຂົ້າປາອາຫານ ແມ້ແຕ່ຍາຕິໂຍມໃຊ້ສັພທ໌ຄໍາເວົ້າບໍ່ເຫມາະກັບວິນັຍກໍຕາມ ໄປຈັນອີຫຍັງກໍໄດ້ ເຊັ່ນຈັນແຮມເບີຣ໌ເກີຣ໌ຈັນປາ ຈັນໄກ່ ຈັນເຂົ້າປຸ້ນເຝີກໍວ່າໄປ ແນວໃດກໍແລ້ວແຕ່ ໕ ເດືອນໄປຈັນໄດ້ ກຖິນກໍແນ່ນອນຢ່າງນີ້ແຫລະ ໄດ້ຜົລປະໂຍຊນ໌ແນ່ນອນແທ້

ຂໍ້ທີ່ ໔ ຖ້າໂຍມມາຖວາຍຜ້າໄຕຣຈີວຣບໍ່ຕ້ອງອະທິຖານກໍໄດ້ ບໍ່ຕ້ອງມອບໃຫ້ໃຜກໍໄດ້ສາມາຖເກັບໄວ້ໄດ້ເຖິງ ໕ ເດືອນ

ຂໍ້ທີ່ ๕ ຖ້າໃຜມາຖວາຍຜ້າຈີວອນ ເຮົາມີອິສຣະຢາກຈະໃຫ້ອາຄັນຕຸກະທີ່ມາກໍໄດ້ ບໍ່ໃຫ້ກໍໄດ້ ສຳຫຼັບພຣະສົງຄ໌ ມີຜົລປະໂຍຊນ໌ເຖິງ ๕ ເດືອນ

**ສຳຫຼັບຍາຕິໂຍມທັ້ງຫລາຍຍ່ອມໄດ້ປະໂຍຊນ໌ແນວໃດ? ຄື:**

ຂໍ້ທີ່ ໑ ໄປໃສມາໃສກໍສະດວກສບາຍບໍ່ມີກັຍອັນຕຣາຍບໍ່ຂັດຂ້ອງ ບໍ່ມີໃຜຈະຫ້າມໄດ້

ຂໍ້ທີ່ ໔ ຊັພຍ໌ສົມບັຕິຂອງເຮົາສິ່ງຂອງໆເຮົາຝາກໄວ້ບ່ອນໃດວາງໄວ້ບ່ອນໃດ ກໍບໍ່ມີອັນຕຣາຍ ໄປໃສມາໃສກໍສະດວກສບາຍ ຈະເຮັດກິຈການອີຫຍັງກໍບໍ່ລຳບາກ ຍ່ອມໄດ້ງ່າຍສະດວກສບາຍ

ຂໍ້ທີ່ ๓ ກ່ຽວກັບເຂົ້າປາອາຫານຈະທານອີຫຍັງກໍໄດ້ທີ່ເຮົາຊອບກິນ ກິນໄປໄດ້ ບໍ່ມີອັນຕຣາຍ ບໍ່ມີໂຣຄກັຍໄຂ້ເຈັບ ບໍ່ປວດທ້ອງ ບໍ່ມີໃຜຈະເຮັດ ໄສຍສາສຕຣ໌ເຮັດໃຫ້ເຮົາປວດທ້ອງ ໄສຍສາສຕຣ໌ເຊັ່ນ: ເສກຕະປູ ເສກຜົມ ຫຼືສິ່ງຂອງອະໄຣເຂົ້າທ້ອງເຮົາບໍ່ໄດ້ ກ່ຽວກັບເຂົ້າປາອາຫານສະດວກສບາຍ ບໍ່ມີອັນຕຣາຍຫຍັງ ບໍ່ມີໃຜຈະໃສ່ຂອງທີ່ເປັນພິษລົງໄດ້

ຂໍ້ທີ່ ๔ ສຳຫຼັບຍາຕິໂຍມທັ້ງຫລາຍ ເຮົາມີເງິນທອງຊັພຍ໌ສົມບັຕິສິ່ງຂອງຕ່າງໆ ເມື່ອເກັບໄວ້ຍ່ອມບໍ່ມີອັນຕຣາຍ ຄືບໍ່ມີສັຕຣູ ๕ ປະການມາຣບກວນເອົາໄປໄດ້

ຂໍ້ທີ່ ๕ ຖ້າເຮົາບໍ່ຕ້ອງການຢາກໃຫ້ສິ່ງຂອງໆເຮົາແກ່ຜູ້ອື່ນ ກໍບໍ່ມີໃຜສາມາຖຈະເອົາໄປໄດ້ ມີອານິສົງສ໌ຜົລປະໂຍຊນ໌ ๕ ປະການທຸກກົພທຸກຊາຕິ

ອີກຂໍ້ສຸດທ້າຍທີ່ ທີ່ຢາກຈະເວົ້າກໍຄືການຖວາຍຜ້າກຖິນນີ້ເປັນບຸນທີ່ປະເສີດ ພຣະພຸທສເຈົ້າຍົກຍ່ອງສັຣເສີນ ເປັນຫຍັງເຖິງເອີ້ນວ່າບຸນທີ່ປະເສີດ ໃນພຣະສັມມ໌ຄັມພີຣ໌ສແດງໄວ້ວ່າ ບາງຢ່າງຖ້າເປັນບິດາມາຣດາຂອງເຮົາຍາຕິພີ່ນ້ອງຂອງເຮົາ ***ເຮົາໄປຂໍໄດ້ ປັຈຈັຍ ໔ ເດີ້***ຕ້ອງການຢ່າງໃດຢ່າງນຶ່ງ ຢາກຈະຂໍຈາກມາຣດາກໍໄດ້ ຂໍຈາກບິດາກໍໄດ້ ຂໍຈາກຍາຕິພີ່ນ້ອງກໍໄດ້ ຂໍຈາກຍາຕິໂຍມທີ່ປວາຣຕາໄວ້ກໍໄດ້ບໍ່ເປັນອາບັຕິ

**ສຳຫຼັບພຣະ**ເຣື່ອງຜ້າກຖິນນີ້ ເພາະຜູ້ຖວາຍຜ້າກຖິນມີອານິສົງສ໌ຜົລປະໂຍຊນ໌ຫຼາຍ ຈະຫນ່ອຍຈະໄປບອກແມ່ໃຫ້ຖວາຍກໍບໍ່ໄດ້ ຈະໄປບອກບິດາມາຣດາວ່າກຖິນນີ້ມີອານິສົງສ໌ຜົລປະໂຍຊນ໌ທີ່ຍິ່ງໃຫລ່ເດີ້ ຢາກໃຫ້ຄຸຕແມ່ຢາກໃຫ້ຄຸຕພໍ່ຖວາຍ ***ນີ້ເວົ້າບໍ່ໄດ້ ເວົ້າບໍ່ໄດ້ເດັດຂາດ!*** ຈະບອກໃຫ້ຍາຕິພີ່ນ້ອງວ່າຖວາຍກຖິນມີອານິສົງສ໌ຫຼາຍໃຫ້ມາທອດກຖິນຮັບເປັນເຈົ້າພາພກຖິນຖ້ອນຖວາຍຜ້າກຖິນຖ້ອນຢ່າງນີ້ກໍ ***ເວົ້າບໍ່ໄດ້!*** ໂຍມທີ່ເຄີຍປວາຣຕາຕົວໄວ້ວ່າຕ້ອງການອີຫຍັງໃຫ້ບອກກໍຕາມ ***ໄປບອກບ່ອນນີ້ບໍ່ໄດ້ແທ້ໆ!*** ຖ້າເປັນກໍຣຕີຢ່າງອື່ນໄດ້ຢູ່ ***ສຳຫຼັບເຣື່ອງທອດກຖິນນັ້ນຊັກຊວນເຂົາບໍ່ໄດ້!*** ເວົ້າບໍ່ໄດ້ເດັດຂາດ ເພາະສະນັ້ນຕ້ອງອອກມາຈາກນ້ຳໃຈສັທສາຂອງຍາຕິໂຍມນັ້ນແຫລະ ຢາກຈະເຮັດກໍເຮັດດ້ວຍຕົວເອງ ຍາຍແປັດປີນີ້ມີໃຜບັງຄັບໃຫ້ຖວາຍຜ້າກຖິນບໍ່ລະ? ບໍ່ມີແມ່ນບໍ່? ນີ້ກໍປຽບສເມືອນຜ້ານີ້ລອຍມາຈາກທ້ອງຟ້າຕົກລົງມາແມ່ນບໍ່? ບໍ່ມີພຣະສົງຂ໌ອົງຄ໌ໃດໄດ້ເວົ້າເຖິງເຣື່ອງນີ້ ມັນເກີດມາຈາກສັທສາຂອງຍາຕິໂຍມ ເຂົາເອີ້ນວ່າເຫມືອນກັບຜ້າຕົກລົງມາຈາກທ້ອງຟ້າອາກາສ ເພາະສະນັ້ນພຣະພຸທສເຈົ້າຈຶ່ງຍ່ອມສັຣເສີນ ຖ້າທາງວັດບອກວ່າ "ຕອນນີ້ມີການທອດກຖິນເດີ້ ຈະຮັບເປັນເຈົ້າພາພ

ເອົາຈັກຊຸດນຶ່ງບໍ່?" ເວົ້າຢ່າງນີ້ ***ບໍ່ໄດ້!*** ບໍ່ມີພຣະຈະຊັກຊວນໄດ້ ມັນຕ້ອງເກີດມາຈາກນ້ຳໃຈສັທສາຂອງເຮົາ ເພາະສະນັ້ນຜ້າກຖິນຈຶ່ງເປັນບຸລທີ່ປະເສີຖນີ້ຄືຂໍ້ທີ່ ໑ເດີ້

ຂໍ້ທີ່ ໔ ເນື່ອງຈາກການຮັບຜ້າຈີວຣນີ້ ພຣະພຸທສເຈົ້າຈະເຕືອນສຕິແນວໃດຮູ້ບໍ່? **ດູກຣພິກຂຸທັ້ງຫລາຍ!** ຖ້າຫາກວ່າທ່ານເປັນຜູ້ທຸສີລ ບໍ່ໄດ້ສຳຣວມກາຍວາຈາແລະຈິຕໃຈຖ້າໄປຫົ່ມຈີວຣຂອງຍາຕິໂຍມ ອັນນີ້ປຽບສເມືອນວ່າໄປຫົ່ມເອົາແຜ່ນເຫລັກທີ່ຮ້ອນຈັດ **ເພາະສະນັ້ນຕ້ອງຣະວັງ!** ພຣະພຸທສເຈົ້າເຕືອນສຕິຕ້ອງຣະວັງນະ! ເພາະສະນັ້ນພຣະຕ້ອງພິຈາຣະນາສເມີວ່າ ເຮົາຫົ່ມຜ້ານີ້ເພື່ອຫຍັງ? ຄືບໍ່ແມ່ນເພື່ອສວຍເພື່ອງາມ ຄືເພື່ອຈະໄດ້ປ້ອງກັນລົມຫຼືຄວາມຮ້ອນຫຼືຄວາມເຢັນ ຫຼືຍຸງ ຫຼືພວກມົດແມງຕ່າງໆ ແລະເພື່ອປິດບັງຄວາມລະອາຍຂອງຕົນ ເຮົາເຖິງຕ້ອງໃຊ້ຈີວຣນີ້ແຫລະ ຕ້ອງພິຈາຣະນາຢ່າງນີ້ທຸກມື້ຈຶ່ງຈະບໍ່ມີໂທສ ບໍ່ເປັນອາບັຕິ **ເຫັນບໍ່!** ພຣະພຸທສເຈົ້າເຕືອນໄວ້ວ່າແມ້ແຕ່ໃຊ້ຈີວຣຖ້າບໍ່ມີສີລ ຄືການບໍ່ສຳຣວມກາຍວາຈາຈິຕໃຈຈະເປັນອັນຕຣາຍເຫມືອນຫົ່ມແຜ່ນເຫລັກທີ່ຮ້ອນຈັດ ໃນທີ່ນີ້ການຖວາຍຜ້າກຖິນເວົ້າແນວໃດຮູ້ບໍ່? ພຣະສົງຄ໌ທັ້ງຫລາຍໃຫ້ຮັບຜ້າກຖິນຖ້ອນ ເມື່ອຮັບຜ້າກຖິນໄປແລ້ວຂໍໃຫ້ໄດ້ອານິສົງສ໌ຜົລປະໂຍຊນ໌ ໕ ປະການນີ້ ທ່ານທັ້ງຫລາຍຈະໄດ້ຮັບຜົລປະໂຍຊນ໌ ໕ ປະການນີ້ ພຣະພຸທສເຈົ້າຍົກຍ່ອງສັຣເສີນເຫັນບໍ່ນີ້ພຣະພຸທສເຈົ້າຍົກຍ່ອງສັຣເສີນກຖິນນີ້ ຄືໃຫ້ພຣະສົງຄ໌ຮັບຕາມສບາຍຮັບແລ້ວຂໍໃຫ້ໄດ້ຮັບຜົລປະໂຍຊນ໌ ໕ ປະການ ອັນນີ້ກໍເປັນຂໍ້ນຶ່ງທີ່ຍາຕິໂຍມໄດ້ຖວາຍຜ້າກຖິນທີ່ພຣະພຸທສເຈົ້າຍົກຍ່ອງສັຣເສີນ ນີ້ຄືຂໍ້ທີ່ ໔

ຂໍ້ທີ່ ໕ ກໍຄືຖ້າເປັນຜ້າປ່າ ຖວາຍຍາມໃດກໍໄດ້ ຖວາຍທຸກມື້ກໍໄດ້ມື້ນຶ່ງຖວາຍຫລາຍຫນກໍໄດ້ ສ່ວນຜ້າກຖິນນີ້ທຳບໍ່ໄດ້ ທີ່ວ່າແນ່ນອນນັ້ນແຫລະເຣັດ

ໄດ້ສະເພາະກາຍໃນເດືອນດຽວ ປີນຶ່ງເຮັດໄດ້ສະເພາະເດືອນດຽວ ເດືອນນຶ່ງເຮັດໄດ້ສະເພາະມື້ດຽວ ມື້ດຽວກາຍໃນ ໒໔ ຊົ່ວໂມງ ກໍເຮັດໄດ້ເທື່ອດຽວ ເວລາຮັບຜ້າກຖິນໄປຕ້ອງຕັດຍິບຍ້ອມໃຫ້ເສຣັຈກາຍໃນມື້ດຽວ ເພາະສະນັ້ນພຣະພຸທສເຈົ້າຈຶ່ງຍົກຍ່ອງສັຣເສີນນີ້ຄືຂໍ້ທີ່ ໓

ຂໍ້ທີ່ ໔ ທີ່ຍົກຍ່ອງສັຣເສີນກໍຄື ຜ້ານີ້ຈະຖວາຍແດ່ພຣະ ກ ພຣະ ຂ ກໍບໍ່ໄດ້ບໍ່ໄດ້ເດີ້ສະເພາະເຈາະຈົງໂຍມຈະຖວາຍອົງຄ໌ນັ້ນອົງຄ໌ນີ້ກໍບໍ່ໄດ້ ຕ້ອງເປັນສັງຄທານນັ້ນແຫລະຖວາຍໃຫ້ແກ່ພຣະສົງຄ໌ ຕອນນີ້ຍາຍແປັດແລະລູກໆ ຫລານໆ ຖວາຍຜ້າກຖິນແມ່ນບໍ່ ຜ້ານີ້ຈະຖວາຍໃຫ້ພຣະອົງຄ໌ໃດອົງຄ໌ນຶ່ງບໍ່ໄດ້ ຕ້ອງຖວາຍແກ່ພຣະສົງຄ໌ ເມື່ອຖວາຍແກ່ພຣະສົງຄ໌ກໍເປັນສິທສິ່ຂອງພຣະສົງຄ໌ ທີ່ວັດເຮົາມີພຣະຈຳພັຣຫາຢູ່ ໗ ອົງຄ໌ແມ່ນບໍ່? ນີ້ເປັນຂອງພຣະສົງຄ໌ທັງ ໗ ອົງຄ໌ ໃນ ໗ ອົງຄ໌ນີ້ ຕາມພຣະວິນັຍພຣະສົງຄ໌ກໍຕ້ອງອຸປໂລກນ໌ວ່າຜ້ານີ້ຄວຣແກ່ອົງຄ໌ນັ້ນອົງຄ໌ນີ້ ພຣະສົງຄ໌ອົງຄ໌ນຶ່ງກໍຈະສເນີຂຶ້ນມາ ເມື່ອສເນີຂຶ້ນມາພຣະສົງຄ໌ທັງຫລາຍກໍຍອມຮັບ ຕົກລົງເຫັນດ້ວຍແລ້ວໃຫ້ສັທທະສັລລາ ອນຸໂມທນາສາສຸການ ເມື່ອຈະມອບໃຫ້ ບໍ່ແມ່ນວ່າຈະມອບໃຫ້ອົງຄ໌ນັ້ນໄປງ່າຍໆ ***ບໍ່ໄດ້!*** ຕ້ອງເຂົ້າໃນພຣະອຸໂບສົຖທຳພິທີສູຕກັມມະວາຈາມອບໃຫ້ ບໍ່ແມ່ນວ່າຍົກໃຫ້ຊື່ໆ ບໍ່ໄດ້ເດີ້ຕ້ອງສູຕກັມມະວາຈາຢ່າງດີຢ່າງຖືກຕ້ອງ ເພື່ອມອບໃຫ້ພຣະອົງຄ໌ໃດອົງຄ໌ນຶ່ງ ບໍ່ແມ່ນສັມມະດາເດີ້ ຖ້າເປັນຜ້າຈີວຣຢ່າງອື່ນບໍ່ຕ້ອງສູຕກັມມະວາຈາມອບຖວາຍໃຫ້ທ່ານໄດ້ເລີຍເພາະສະນັ້ນພຣະພຸທສເຈົ້າຈຶ່ງຍົກຍ່ອງສັຣເສີນ ຄືເປັນການທີ່ຖວາຍແກ່ພຣະສົງຄ໌ໂດຍສະເພາະ ການຖວາຍແກ່ພຣະສົງຄ໌ນີ້ມີອານິສົງສ໌ຜົລປະໂຍຊນ໌ຫຼາຍ ພຣະສົງຄ໌ທີ່ນີ້

ໃຫ້ຣະລຶກນຶກເຖິງບຸນຄຸຕຂອງພຣະອຣິຍສົງຄ໌ພຣະອຣຫັນຕ໌ທັ້ງຫລາຍນັ່ນແຫລະ ກໍຍ່ອມໄດ້ຜົລອານິສົງສ໌ຜົລປະໂຍຊນ໌ມາກ

ອີກປະການນຶ່ງເວລາຖວາຍແກ່ພຣະສົງຄ໌ຈະມອບໃຫ້ພຣະສົງຄ໌ອົງຄ໌ໃດອົງຄ໌ນຶ່ງ ຕ້ອງມອບໃຫ້ໃຜຮູ້ບໍ່? **ບໍ່ແມ່ນເຈົ້າອາວາສນະ!** ຕ້ອງເບິ່ງວ່າມີພຣະຈັກຫມື່ນຈັກພັນຈັກຮ້ອຍ ໃນຫມູ່ພຣະສົງຄ໌ທັ້ງຫລາຍເຫຼົ່ານັ້ນມີໃຜມີຜ້າເກົ່າຫຼາຍ ພຣະສົງຄ໌ທີ່ລໍາບາກຫຼາຍ ຕ້ອງມອບຜ້າໃຫ້ພຣະອົງຄ໌ນັ້ນໄປ ສມັຍກ່ອນພຸ້ນພຣະກໍມີຫຼາຍ ຄົນກໍບໍ່ຄ່ອຍຈະມີເງິນເທົ່າໃດຄົງມີຄວາມລໍາບາກຫຼາຍ ໂດຍສະເພາະທີ່ບ້ານນອກບ້ານນາ ສມັຍກ່ອນອາຈຈະເຫັນພຣະສົງຄ໌ທີ່ມີຈີວອຣເກົ່າແກ່ຂາດໄປ ກໍເບິ່ງວ່າພຣະອົງຄ໌ໃດລໍາບາກກໍຕ້ອງມອບໃຫ້ອົງຄ໌ນັ້ນໄປ ເມື່ອມອບໃຫ້ອົງຄ໌ນັ້ນທ່ານກໍຈະມີຈີວອຣຢ່າງດີຂຶ້ນເຮັດໃຫ້ທ່ານສົມບູຣຕ໌ ເມື່ອເຮັດໃຫ້ຜູ້ທີ່ຍາກຈົນຮໍ່າຣວຍຂຶ້ນມາສົມບູຣຕ໌ຂຶ້ນມາ ເຈົ້າກາພຈະໄດ້ອານິສົງສ໌ແນວໃດເດ້? ກໍຈະຕ້ອງສົມບູຣຕ໌ປັຕຖນາສິ່ງໃດກໍຍ່ອມໄດ້ສົມຄວາມປັຕຖນາ ເພາະສະນັ້ນພຣະພຸທສເຈົ້າຈຶ່ງຍົກຍ່ອງສັຣເສີນວ່າຜ້າກຖິນມີອານິສົງສ໌ຜົລປະໂຍຊນ໌ຫຼາຍ

ອີກປະການນຶ່ງ ***ສໍາຫຼັບຄວາມຮູ້ກໍແລ້ວກັນ*** ເຮົາມີເຈດີຍ໌ເຕັມໄປຫມົດທົ່ວໂລກທີ່ນີ້ເຮົາກໍມີ ບ້ານເຮົາເມືອງເຮົາກໍເຕັມໄປຫມົດ ກ່ຽວກັບເຈດີຍ໌ນີ້ມີອີຫຍັງທີ່ຍອດເຈດີຍ໌? ມີເພັຊຣ໌ ອາຈຈະເພັຊຣ໌ແທ້ກໍໄດ້ ເພັຊຣ໌ປລອມກໍໄດ້ ບໍ່ມີໃຜໃສ່ທອງດອກທີ່ສຸດຍອດຂອງເຈດີຍ໌ ເຂົາເອີ້ນອີຫຍັງນະຍອດສຸດຂອງເຈດີຍ໌ "ພາສາລາວເຂົາເອີ້ນວ່າແນວໃດ?" ເພັຊຣ໌ຍອດເຈດີຍ໌ກໍແລ້ວກັນ ເຂົາຈະໃຊ້ເປັນເພັຊຣ໌ ອັນນີ້ກໍຄືຫມາຍຄວາມວ່າ ຣັຕນນັ້ນມີທັ້ງແກ້ວທັ້ງເງິນທັ້ງທອງທັ້ງເພັຊຣ໌ທັ້ງທັບທິມທັ້ງພລອຍຢ່າງຫຼວງຫຼາຍເຕັມໄປຫມົດແມ່ນບໍ່? ໃນຣັຕນທັ້ງຫລາຍເຫຼົ່ານັ້ນທີ່ດີທີ່ສຸດທີ່ປະເສີຖທີ່ສຸດຄືຫຍັງ?

"***ເພັຊຣ໌***" ເພາະຫຍັງ? ເອົາເພັຊຣ໌ໃສ່ຍອດເຈດີຍ໌ແມ່ນບໍ່?! ເຮົາຈະບໍ່ໃຊ້ຢ່າງອື່ນ ເປັນຫຍັງຕ້ອງໃສ່ເພັຊຣ໌ເປັນຫຍັງບໍ່ໃສ່ທອງບໍ່ໃສ່ພລອຍຢ່າງອື່ນໄປ ເພັຊຣ໌ນີ້ຈະມີແສງປະກາຍອອກມາຢູ່ສເມີ ເມື່ອພຣະອາທິຕຍ໌ພຣະຈັນທຣ໌ສ່ອງຂື້ນມາກໍຈະຈາຍແສງສວ່າງ ໃຜຈະຢູ່ບ່ອນໃດເຂົາຈະຫຼຽວເຫັນວ່ານັ່ນຄືເຈດີຍ໌ ຣະລຶກນຶກເຖິງບຸຄຸຄຂອງພຣະພຸທສພຣະສັມມ໌ພຣະສົງຄ໌ກໍຕ້ອງກຣາບໄຫວ້ ນັ່ນຄືຄວາມສູງທີ່ສແດງໃຫ້ເຮົາເຫັນຊັດ ເພາະສະນັ້ນແກ້ວທັ້ງຫລາຍຣັຕນະທັ້ງຫລາຍນີ້ ແກ້ວທີ່ຍອດເຈດີຍ໌ນັ້ນປະເສີຖທີ່ສຸດກໍຄື "***ເພັຊຣ໌***" ວັດຫຼືອຸໂບສົຖຫຼືກຸຜິພຣະຫຼືສາລາອາຄາຣຕ່າງໆ ທີ່ດີທີ່ສຸດ ປະເສີຖທີ່ສຸດຄືຫຍັງ? ຄືສີມຫຼືພຣະອຸໂບສົຖ ວັດກໍເປັນທີ່ອາສັຍເຫມືອນກັນແມ່ນບໍ່? ກໍມີກຸຜິຂອງພຣະສາລາອເນກປະສົງຄ໌ເປັນຕົ້ນ ແຕ່ອຸໂບສົຖນີ້ເຖິງແມ້ວ່າຈະເລັກກໍຕາມຍ່ອມປະເສີຖກວ່າອາຄາຣທັ້ງຫລາຍ ເປັນຫຍັງຈື່ງປະເສີຖທີ່ສຸດ ໃນທົ່ວໂລກຄຶດເອົາບ້ານເຮົາກໍແລ້ວກັນ ພຣະຄຣູມາຈາກໃສກໍມາຈາກໂບສຖ໌ ເຈົ້າຄຸຄມາຈາກໃສກໍມາຈາກໂບສຖ໌ ສົມເດັຈມາຈາກໃສກໍມາຈາກໂບສຖ໌ນັ່ນແຫລະ ພຣະສັງຄຣາຊອອກມາຈາກໃສກໍມາຈາກໂບສຖ໌ນັ່ນແຫລະ ***ໂບສຖ໌ເປັນທີ່ເກີດຂອງພຣະສົງຄ໌ແມ່ນບໍ່?!*** ຜູ້ທີ່ບັຣລຸເປັນພຣະອຣຫັນຕ໌ມາຈາກໃສອອກມາຈາກໂບສຖ໌ທັ້ງນັ້ນເຫັນບໍ່ ໂບສຖ໌ນີ້ເປັນທີ່ເກີດຂອງພຣະສົງຄ໌ ***ໂບສຖ໌ເປັນທີ່ເກີດຂອງຜູ້ທີ່ບັຣລຸເປັນພຣະໂສດາບັນ ພຣະສກທາຄາມີ ພຣະອນາຄາມີ ພຣະອຣຫັນຕ໌*** ເພາະສະນັ້ນໂບສຖ໌ຈື່ງສຳຄັລກວ່າອາຄາຣທັ້ງຫລາຍໃນວັດ ***ໂບສຖ໌ນີ້ຈື່ງປະເສີຖທີ່ສຸດ*** ກ່ຽວກັບຈີວຣ ມີການຖວາຍຈີວຣເຂົ້າພັຣษາຜ້າບັງສຸກຸລ ຖວາຍຈີວຣປີໃຫມ່ ຈີວຣທີ່ທອດຜ້າປ່າສາມັຄຄີ ຈີວຣຈາກການຖວາຍສັງຄທານ ໂຍມກໍ

ຖວາຍເລື້ອຍໆແມ່ນບໍ່? ການຖວາຍຈີວອນທີ່ປະເສີດທີ່ສຸດຄືຫຍັງ? ຄື *"**ຜ້າກະຖິນ**"* ຜ້າກະຖິນຈຶ່ງປະເສີດທີ່ສຸດ

ອັນນີ້ກ່ຽວກັບກະຖິນ ເມື່ອກີ້ຍາຍແປ໊ດກໍບອກວ່າມີລູກໆ ຫລານໆ ຮ່ວມກັນຈະທອດກະຖິນມື້ອື່ນນີ້ ກໍຈະໄດ້ຖວາຍຈຕຸປັຈຈັຍ $໑໐, ໕໐໐ ກວ່າ ຈະເທົ່າໃດກໍແລ້ວແຕ່ ຄິດເບິ່ງກໍແລ້ວກັນເຮົາເປັນຜູ້ນຳບຸນ ຜູ້ທີ່ເປັນປະທານກະຖິນກໍເປັນຜູ້ນຳບຸນທີ່ມີຄົນມາຮ່ວມຖວາຍຜ້າກະຖິນ $໑໐໐ ກໍມີ $໔໐໐ ກໍມີ $໕໐໐ ກໍມີ ຖວາຍຜ້າຈີວອນບູຊາເອົາ $໔໐ ກໍມີ ຜູ້ທີ່ຮ່ວມໃສ່ຕົ້ນກະຖິນ $໑ ກໍມີ $໔ ກໍມີ ເຮົາເປັນຜູ້ນຳບຸນ ແລະຜູ້ທີ່ຈະໄດ້ເປັນເຈົ້າພາບຜູ້ນຳບຸນນີ້ບໍ່ແມ່ນວ່າປຸ໊ບປັ໊ບເຮັດໄດ້ເລີຍ ຕັ້ງໃຈຈັກປີນີ້? ໔-໕ ປີ ເມື່ອສອງສາມປີໄດ້ຄິດວ່າຂນ້ອຍຢາກຈະທອດກະຖິນຈັກເທື່ອນຶ່ງໃນຊີວິດ ຈະເປັນປະທານເຈົ້າພາບກະຖິນເປັນຜູ້ນຳບຸນ ຄືດຍາມໃດກໍເປັນມຫາບຸນມຫາກຸສົລ ເປັນມຫາບຸນມຫາກຸສົລທຸກມື້ ເຖິງແມ້ວ່າເຮົາຍັງບໍ່ໄດ້ຖວາຍຕາຍກ່ອນ ຕາຍໄປກ່ອນໜ້າ ໑ເດືອນ ໔ ເດືອນ ໂຍມກໍໄດ້ບຸນເໝືອນກັນ ເພາະຫຍັງ? ເພາະເຮົາຄິດເຖິງເຣື່ອງທີ່ຈະເປັນປະທານກະຖິນ ຢາກຈະເຮັດບຸນເປັນເຈົ້າພາບກະຖິນ ຄືດຍາມໃດກໍເປັນມຫາບຸນມຫາກຸສົລ ສະສົມຈຕຸປັຈຈັຍໄປເລື້ອຍໆ ເຮົາປະຫຍັດຢ່າງອື່ນເພື່ອຈະໄດ້ເຮັດບຸນທຳທານຖວາຍກະຖິນນີ້ຈຶ່ງເປັນມຫາບຸນມຫາກຸສົລເຫັນບໍ່! ໕ ປີໄດ້ບຸນຕັ້ງແຕ່ ໕ ປີທີ່ຄິດມາແມ່ນບໍ່?! ກໍບໍ່ແມ່ນສົມມະດາໆ ເງິນບໍ່ແມ່ນວ່າເຮົາມີເງິນເດືອນເປັນພັນໆ ເປັນໝື່ນໆ ບໍ່ແມ່ນຢ່າງນັ້ນ ກໍຕ້ອງສະສົມທີລະໜ່ອຍໆໄປເພື່ອຈະໄດ້ເຖິງຂນາດນີ້ບໍ່ແມ່ນສົມມະດາ ທີນີ້ຢາກໃຫ້ເຂົ້າໃຈວ່າ ຖ້າທຳບຸນຢ່າໄປຄິດວ່າຈັນໝົດໄປ $໑໐, ໐໐໐ ແຕ່ໃຫ້ຄິດວ່າຈັນໄດ້ໝື່ນກວ່າ ບໍ່ແມ່ນໝື່ນກວ່າມາກກວ່ານັ້ນ ການທຳບຸນເໝືອນກັບຫຍັງ? ເໝືອນກັບເຮົາໄປຫວ່ານ

ເມລັດເຂົ້າເມລັດງາກະສອບນຶ່ງໄປໃນພື້ນດິນໄຮ່ນາຂອງເຮົາ ເຮົາກໍຫວ່ານໄປປລູກໄປກະສອບນຶ່ງ ແລ້ວຈະໄດ້ຄືນຈັກກະສອບ? ຫລາຍຮ້ອຍກະສອບແມ່ນບໍ່? ເຊັ່ນດຽວກັນເຮົາທຳບຸຍໄປກໍເຫມືອນກັນເຮົາຈະໄດ້ຄືນມາຫລາຍຮ້ອຍເທົ່າ ຫລາຍພັນເທົ່າ ເປັນໄປໄດ້ບໍ່? ຄິດເບິ່ງກໍແລ້ວກັນ ຖ້າຫາກວ່າເຮົາທຳບຸຍເຮົາບໍ່ຄິດຢ່າງອື່ນ ໃຫ້ຄິດເຖິງຂໍ້ນີ້ ຕາຍໄປຂຶ້ນສວັຣຄ໌ກໍໄດ້ ຖ້າຂຶ້ນສວັຣຄ໌ເປັນຈັ່ງໃດລະ? ວິມານໃຫຍ່ໂຕມໂຫສາຣເພັຊຮ໌ນິລຈິນດາເຕັມໄປຫມົດ ເຮົາຖວາຍແຄ່ຫມື່ນນຶ່ງເຮົາໄດ້ຫລາຍຫມື່ນຢູ່ພຸ້ນ ສວັຣຄ໌ບໍ່ຕ້ອງເວົ້າເຖິງເພາະເຮົາບໍ່ເຫັນ ຖ້າເກີດເປັນມນຸຍ໌ ເຮົາຈະຂໍເປັນລູກມຫາເສຍກີ ຜູ້ທີ່ມີອຳນາຈຢ່າງໃດຢ່າງນຶ່ງ ກໍຂໍບໍ່ໄດ້ຂຶ້ນຢູ່ກັບບຸຍຂອງເຮົາ ຖ້າເຮົາທຳບຸຍທີ່ຍິ່ງໃຫຍ່ ບຸຍກຸສົລຂອງເຮົາກຸສົລກັມມ໌ຂອງເຮົາ ເຮົາສົມຄວຣຈະໄປເກີດບ່ອນໃດ? ຕາຍປຸ໊ບໄປເກີດບ່ອນໃດຖ້າເປັນມນຸຍ໌ພໍ່ແມ່ກໍຕ້ອງດີທ້ອງຖິ່ນກໍດີປະເທສກໍຕ້ອງດີ ແມ້ແຕ່ເຮົາຢູ່ໃນທ້ອງຂອງມາຣດາເຮົາຍັງບໍ່ໄດ້ຄລອດອອກມາ ພໍ່ແມ່ຂອງເຮົາຈະສົມຄວຣເປັນໃຜເປັນຜູ້ທີ່ມີບ້ານຫລາຍຫລັງ ຣົຖກໍຫລາຍຄັນ ເງິນທອງກໍຫລາຍລ້ານ ແລ້ວສົມບັຕິເຫຼົ່ານັ້ນຈະເປັນຂອງໃຜ? ກໍເປັນຂອງເຮົາດ້ວຍ ແຕ່ເຮົາຍັງບໍ່ໄດ້ເກີດເລີຍຄອຍເຮົາຢູ່ແລ້ວ **ເພາະເຫຕຸໃດ?** ກໍເພາະເຮົາຫວ່ານໄວ້ທີ່ໄດ້ເວົ້າໄປເມື່ອຕະກີ້ນີ້ ເມລັດເຂົ້າເມລັດງາພຽງກະສອບນຶ່ງ ເຮົາຕ້ອງໄດ້ຄືນຫລາຍກະສອບຈັນໃດຈັນນັ້ນ ເຮົາທຳບຸຍໄປຫມື່ນນຶ່ງນີ້ຄອຍເຮົາຢູ່ ຄອຍທີ່ຈະໃຫ້ຜົລແກ່ເຮົາຫລາຍພັນເທົ່າ ອີກຂໍ້ນຶ່ງກໍນ່າຈະຄິດເຫມືອນກັນເຊັ່ນວ່າ ເຮົາມີເງິນຊັພຍ໌ສົມບັຕິຫຼວງຫຼາຍຫລາຍລ້ານສົມມຕິເອົາເດີ້ ຖ້າປຸ໊ບປັ໊ບຫົວໃຈວາຍຕາຍໄປ ຊັພຍ໌ສົມບັຕິເງິນທອງຫລາຍໆ ລ້ານຈະເປັນແນວໃດເດ້? **ເອົາໄປໄດ້ບໍ່? ເອົາໄປບໍ່ໄດ້!** ແລະຖ້າລູກເຕົ້າບໍ່ດີກໍຜິດກັນຟ້ອງກັນນັ້ນແຫລະ ຄືຈະເປັນປັຍຫາໃຫ້ເຂົາ

ເພາະສະນັ້ນໃຫ້ນຶກເຖິງພຣະພຸທສເຈົ້າຂອງເຮົາເປັນຕົວຢ່າງ ພຣະພຸທສເຈົ້າຂອງເຮົາຕອນເປັນພຣະຣືບີສຸເມສາບັຕສ໌ຫິຕໃນສມັຍພຣະພຸທສເຈົ້າທີປັງກຣ ທ່ານມີອາຍຸ ໑໗ ປີ ເປັນຜູ້ໃຫຍ່ແລ້ວ ຜູ້ທີ່ມີໜ້າທີ່ຮັບຜິດຊອບການເງິນຊັບພຍ໌ສົມບັຕິກໍເລີຍມາມອບຄືນໃຫ້ວ່າຕາມບັນຊີທີ່ບັນທຶກໄວ້ວ່າ ອັນນີ້ຄືຂອງບິດາຂອງທ່ານຢູ່ໃນໂກດັ່ງນັ່ນແຫລະເຕັມໄປໝົດເລີຍ ແລະອັນນີ້ຄືບັນຊີຊັພຍ໌ສົມບັຕິເງິນທອງຂອງປູ່ທ່ານ ສ່ວນອັນນັ້ນກໍຄືຂອງປູ່ທວດ ...ຂອງປູ່ທວດເຈັດຊົ່ວໂຄຕຣ໌ທີ່ເປັນກອງໆ ຢູ່ ສ່ວນດ້ານນີ້ກໍເປັນຊັພຍ໌ສົມບັຕິຂອງມາຣດາຂອງທ່ານ ແລະອັນນີ້ກໍຄືຂອງພໍ່ແມ່ຂອງມາຣດາ ອັນນີ້ກໍເປັນຂອງປູ່ຍ່າຕາຍາຍຂອງຝ່າຍແມ່ອີກ ໆ ຊົ່ວໂຄຕຣ໌ ທີ່ເປັນປູ່ທວດຍ່າທວດທັ້ງພໍ່ທັ້ງແມ່ກໍມີເຕັມໄປໝົດເລີຍ ທ່ານກໍຄືດວ່າເປັນຫຍັງປູ່ຍ່າຕາຍາຍທັ້ງເຈັດຊົ່ວໂຄຕຣ໌ບໍ່ສາມາຖເອົາຊັພຍ໌ສົມບັຕິເຫຼົ່ານີ້ໄປດ້ວຍແລະຕາຍໄປ ..."***ແລ້ວເຮົາຈະເຮັດແນວໃດດີທີ່ນີ້? ນີ້ຄືຜູ້ມີຄວາມຄຶດດີແມ່ນບໍ່?!*** ເຮົາຈະບໍ່ຖິ້ມໄວ້ ເຮົາຈະເອົາໄປໃຫ້ໝົດ ໂດຍການທຳບຸລ ຈຶ່ງເຂົ້າໄປໃນພຣະຣາຊວັງວ່າຕອນນີ້ຂ້ັນມີຊັພຍ໌ສົມບັຕິຫຼວງຫຼາຍ ຢາກໃຫ້ພຣະມຫາກະສັຕຣິຍ໌ຊ່ວຍປະກາສ ເພາະສມັຍກ່ອນບໍ່ມີໜັງສືພິມພ໌ຕ້ອງຕີພ້ອງຕາມທ້ອງຖນົນປ່າວປະກາສໄປວ່າ ທີ່ນັ້ນທີ່ນີ້ມີການບໍຣິຈາຄທານ ມີຜູ້ໃຈບຸລທ່ານນຶ່ງຢາກຈະບໍຣິຈາຄຊັພຍ໌ສົມບັຕິຂອງຕົນຊຶ່ງມີຫຼວງຫຼາຍ ໃຜຕ້ອງການກໍຂໍເຊີນໃຫ້ໄປຮັບເອົາໄດ້ ກໍມີຄົນຫຼວງຫຼາຍໄປເອົາກັນ ທ່ານກໍບໍຣິຈາຄຊັພຍ໌ສົມບັຕິ ຄືໄດ້ເຮັດບຸລທັ້ງ ໆ ວັນ ໆ ຄືນກໍບໍ່ໝົດເພາະມັນມາກເກີນໄປ ຈຶ່ງກ່າວວ່າ "***ຂ້ັນກໍຄອຍບໍ່ໄຫວແລ້ວ ໃຜຕ້ອງການເອົາກໍເອົາໄປໄດ້*** ແລ້ວທ່ານກໍເລີຍອອກບວຊຖິ້ມຊັພຍ໌ສົມບັຕິທັ້ງໝົດທີ່ມີຢູ່ ຄືຊັພຍ໌ສົມບັຕິທີ່ຢູ່ໃນໂກດັ່ງທັ້ງໝົດກໍໃຫ້ເປັນທານແລ້ວອອກບວຊໄປ ແລະທ່ານກໍໄດ້ບັຣລຸຊານໄປ ຊາຕິກົພຕໍ່ໄປເປັນແນວໃດຮູ້ບໍ່?

ເບິ່ງໃນຊາດົກກໍແລ້ວກັນ ເກີດເປັນພຣະອິນທຣ໌ກໍມີ ເກີດເປັນພຣະພຣົຫມກໍມີ ເກີດເປັນມຫາກະບັຕຣິຍ໌ກໍມີ ເກີດເປັນມຫາເສຍຖີກໍມີ ***ເຫັນບໍ່ທີ່ທ່ານທຳບຸລໄປ*** ດັ່ງທີ່ເວົ້າໄປເມື່ອຕະກີ້ນີ້ແຫລະ ເມື່ອຫວ່ານພັນສຸ໌ພືຊໄປກະສອບນຶ່ງ ໄດ້ຈັກກະສອບນີ້? ຫລາຍພັນກະສອບແມ່ນບໍ່?! ໄດ້ຜົລປະໂຍຊນ໌ຫຼວງຫຼາຍ ມາກກວ່າທີ່ໄດ້ເຮັດບຸລໄວ້ພຣະພຸທສເຈົ້າຂອງເຮົາຊາຕິສຸດທ້າຍ ກໍໃຫ້ເຮົາຄຶດເບິ່ງກໍແລ້ວກັນ ບໍ່ມີອີຫຍັງຂາດເຫລືອ ຄືສົມບູຣຕ໌ທຸກສິ່ງທຸກຢ່າງ ບໍ່ຕ້ອງວ່າຕອນທີ່ມີພຣະຊົນມ໌ພັຣຫາຢູ່ເລີຍ ແມ້ແຕ່ຕອນດັບຂັນສປຣິນິພພານໄປ ກໍໃຫ້ເບິ່ງທີ່ພວກເຮົາກຣາບພຣະພຸທສຣູປກໍແລ້ວກັນ ວັດນີ້ກໍເປັນທີ່ຢູ່ທີ່ປະທັບຂອງທ່ານ ເຈດີຍ໌ກໍເປັນທີ່ປະທັບຂອງພຣະພຸທສເຈົ້າຊາຕິສຸດທ້າຍຂອງທ່ານນັ້ນ ຈະໄປໃສມາໃສກໍສະດວກສບາຍແມ່ນບໍ່? ມີຊັພຍ໌ສົມບັຕິ ມີບໍຣິວາຣຫຼວງຫຼາຍ ແມ້ແຕ່ຕົວແທນພຣະພຸທສຣູປກໍມີຄົນຖວາຍເພັຊຣ໌ນິລຈິນດາເຕັມໄປຫມົດແມ້ແຕ່ຈີວຣກໍເປັນຈີວຣທອງນັ່ນແຫລະ ເພາະຫຍັງ? ເພາະທ່ານທຳບຸລທຳທານໄວ້ຕັ້ງແຕ່ຊາຕິປາງກ່ອນຈຶ່ງໃຫ້ຜົລຫຼວງຫຼາຍ ອັນນີ້ກໍຂໍ້ນຶ່ງນ່າຈະຈື່ຈຳໄວ້

ອີກປະການນຶ່ງພຣະພຸທສເຈົ້າກໍສແດງໄວ້ວ່າ ປຽບສເມືອນບ້ານຫລັງນຶ່ງໄຟກຳລັງໄຫມ້ ເມື່ອໄຟໄຫມ້ບ້ານໄປຊັພຍ໌ສົມບັຕິທີ່ມີຫຼວງຫຼາຍຕ້ອງເຮັດແນວໃດກັນແທ້? ກໍຕ້ອງຣີບເອົາຊັພຍ໌ສົມບັຕິອອກມາເທົ່າທີ່ຈະເອົາອອກໄປໄດ້ ແລ້ວຕໍ່ມາໄຟກໍໄຫມ້ຫມົດບໍ່ເຫລືອ ພໍຫມົດບໍ່ເຫລືອແລ້ວຈະມີອີຫຍັງເຫລືອອີກ? ກໍໄດ້ແຕ່ທີ່ນຳອອກມາໄດ້ນັ້ນເປັນຂອງເຮົາ ***ເຊັ່ນດຽວກັນ*** ຄວາມແກ່ກໍເປັນໄຟຊນິດນຶ່ງ ຄວາມຕາຍກໍເປັນໄຟຊນິດນຶ່ງ ເຮົາແກ່ທຸກມື້ ແມ່ນບໍ່? ທຸກວິນາທີເຮົາກໍແກ່ລົງໆ ນີ້ແຫລະຄືໄຟທີ່ກຳລັງໄຫມ້ມື້ນຶ່ງມໍຣຕະຈະເປັນໄຟເຜົາເຮົາບໍ່ເຫລືອໂດຍບໍ່ມີອີຫຍັງເຫລືອ ຖ້າຫາກວ່າເຮົາແກ່ເກີນ

ໄປຄືໄຟຂອງຄວາມແກ່ກໍເຜົາ ສຸດທ້າຍຄືໄຟຄວາມຕາຍຈະເຜົາເຮົາ ເຖິງມື້ນັ້ນກໍບໍ່ມີອີຫຍັງເຫລືອ ແລະເຮົາຄວຣໄດ້ມີອີຫຍັງແດ່ກ່ອນຈະຕາຍ ກ່ອນໄຟຈະໄຫມ້ຫມົດກໍໃຫ້ຕຽມຕົວໄວ້ຄື ***ທຳບຸນທຳທານ ຮັກສາສີລສັມມ໌ຈເຣີນກາວນານັ້ນແຫລະຄືການເອົາຊັພຍ໌ສົມບັຕິຂອງເຮົາອອກມາຈາກໄຟ*** ເຮົາເອົາບຸນກຸສົລນີ້ແຫລະສ້າງໄວ້ສະສົມໄວ້ໃຫ້ເປັນຂອງໆເຮົາ ເພາະສະນັ້ນການທຳບຸນນີ້ບໍ່ແມ່ນວ່າຈະຫມົດໄປ ວັນນີ້ເຮົາໄດ້ເຮັດບຸນກໍປຽບສເມືອນເຮົາຝາກໄວ້ໃນສນາຄາຣຂອງພຣະພຸທສສາສນາ ໂຍມໄປຝາກເງິນໄວ້ໃນສນາຄາຣເບີກຍາມໃດກໍໄດ້ ແຕ່ເບີກໄດ້ສະເພາະຊາຕິດຽວຄືຊາຕິນີ້ ***ຕາຍໄປຈະເບີກໄດ້ບໍ່?*** ຕາຍແລ້ວສນາຄາຣທາງໂລກເຮົາໄປເບີກບໍ່ໄດ້ ແຕ່ສນາຄາຣທາງສັມມ໌ຢ່າງທີ່ໄດ້ເວົ້າໄປເມື່ອກີ້ນີ້ ເຮົາຝາກໄວ້ຊາຕິນີ້ມີດອກເບັ້ຽເພີ່ມຂຶ້ນເລື້ອຍໆ ໄປຕໍ່ຊາຕິຫນ້າກໍເບີກໄດ້ ເຊັ່ນຖ້າເຮົາໄປເກີດເປັນລູກເສຖກີ ທຳມາຄ້າຂາຍກໍຈເຣີນ ຫຼືທຳສຸຣກິຈກໍຈເຣີນກ້າວຫນ້າ ເພາະຫຍັງ? ເພາະເຮົາປລູກຝັງໄວ້ແລ້ວແມ່ນບໍ່? ດັ່ງນັ້ນນ່າຈະພູມີໃຈຕົວເອງນະວ່າເຮົາເປັນຊາວພຸທສ ເຮົາໄດ້ເກີດເປັນມນຸສຍ໌ ເຮົາມີສັທສາ ເຮົາມີປັນຍາເຮົາໃຊ້ຊັພຍ໌ສົມບັຕິຂອງເຮົາຢ່າງມີປະໂຍຊນ໌ ເຮົາກໍສຳຣວມກາຍວາຈາຂອງເຮົາໃຫ້ຢູ່ໃນສີລສັມມ໌ ມີໂອກາສເຮົາກໍຮັກສາສີລ ຯ ທຳວັຕຣ໌ສູຕມົນຕ໌ ຈເຣີນເມຕຕາຈເຣີນສມຖກາວນາວິປັສສນາກາວນານີ້ແຫລະ ເຮົາຮີບເອົາສິ່ງຂອງໆເຮົາທີ່ມີຄຸຕຄ່າສະສົມໄວ້ເປັນຂອງເຮົາທີ່ແທ້ຈິງ ຢ່າງອື່ນບໍ່ແມ່ນຂອງເຮົາ ລູກກໍບໍ່ແມ່ນລູກເຮົາ ຫລານກໍບໍ່ແມ່ນຫລານເຮົາ ເຖິງເວລາກໍຕ່າງຄົນຕ່າງໄປນັ້ນແຫລະ ສິ່ງທີ່ເຮົາຈະເອົາໄປໄດ້ຄືຫຍັງ? ກໍຄືກຸສົລກັມມ໌ທີ່ເຮົາສ້າງໄວ້ນັ້ນແຫລະ ເພາະສະນັ້ນສຳຫຼັບວັນນີ້ເຣື່ອງກະຖິນກໍຮູ້ໄປແລ້ວ ***ກະຖິນຄືຫຍັງ?*** ກໍຄື***ມັ່ນຄົງ*** ທອດໄດ້ພາຍໃນ ໑ ເດືອນໄດ້ຜົລປະໂຍຊນ໌ເຖິງ ໕ ເດືອນຢ່າງ

ແນ່ນອນຈຶ່ງເອີ້ນວ່າກຖິນ ກຣານກຖິນກໍຄືທຳອານິສົງຄ໌ຜົລປະໂຍຊນ໌ໃຫ້ຂຍາຍກວ້າງອອກໄປເອີ້ນວ່າກຣານກຖິນ ເຮົາໄດ້ຜົລປະໂຍຊນ໌ ໕ ປະການໂດຍບໍ່ຕ້ອງຂໍ ເຮົາເຮັດໃຫ້ຜູ້ອື່ນສບາຍໃຈ ເຮົາກໍໄດ້ມີຄວາມສບາຍໃຈໄປດ້ວຍເປັນສັມມະດາ ເຮົາເຮັດໃຫ້ຄົນອື່ນເຂົາເດືອດຮ້ອນ ເຮົາກໍຕ້ອງໄດ້ເດືອດຮ້ອນແນ່ນບໍ່? ເຮົາເຮັດໃຫ້ ພຣະສົງฆ໌ມີຜົລປະໂຍຊນ໌ ໕ ປະການເກີດຂຶ້ນ ຍາຕິໂຍມທັ້ງຫລາຍກໍຍ່ອມໄດ້ຜົລປະໂຍຊນ໌ ໕ ປະການນີ້ເຫມືອນກັນແນ່ນອນ ...ແລະທ້າຍທີ່ສຸດນີ້ດ້ວຍອານຸภາພທີ່ທ່ານທັ້ງຫລາຍມີເຈຕນາສັທธาສຕິປັญญาໄດ້ມາຮ່ວມກັນທອດກຖິນສາມັຄຄີ ໄດ້ມາຮັກษาສີລສັມມ໌ ໄດ້ຟັງເທສນ໌ຟັງສັມມ໌ ແລະໄດ້ຈເຣີນສມຖວິປັສສນາภາວນາ ກໍຂໍໃຫ້ບຸญກຸສົລທັ້ງຫລາຍເຫຼົ່ານີ້ ຄຸ້ມຄຣອງຮັກษาບັຣດາຍາຕິໂຍມທັ້ງຫລາຍໃຫ້ໄດ້ມີສຸຂภາພອນາມັຍທີ່ແຂັງແຮງ ເພື່ອໃຫ້ໄດ້ມີໂອກາສບຳເພັญກຸສົລຈເຣີນບາຣມີຕໍ່ໄປໃຫ້ຫລຸດພົ້ນຈາກຄວາມທຸກຂ໌ ຂໍໃຫ້ບັຣລຸມັຄຄ໌ຜົລນິພານກັນໃນປັຈຈຸບັນຊາຕິນີ້ດ້ວຍເທີ້ນໆ..

# ບົດສຣຸປ ກຖິນຂັນສກະ ວ່າດ້ວຍກຖິນ

ສ ມັຍນັ້ນພຣະຜູ້ມີພຣະພາຄປະທັບຢູ່ ທີ່ ເຊຕວັນ ກຣຸງສາວັຕຖີ ພິກຂຸຊາວເມືອງ**ປາເຖຍຍກະ**[5] ໓໐ ອົງຄ໌ ຊຶ່ງເປັນຜູ້ຖືການຢູ່ປ່າ, ການທ່ຽວບິຕຫບາຕ, ນຸ່ງຫົ່ມຜ້າບັງສຸກຸລ (ຜ້າເກັບຕົກມາປະຕິປະຕໍ່ທຳເປັນຈີວຣ) ແລະໃຊ້ຈີວຣ ໓ ຜືນເປັນວັຕຣ໌ ເດີນທາງຈະມາເຝົ້າພຣະຜູ້ມີພຣະພາຄ ເຫລືອຣະຍະທາງອີກ ໖ ໂຍຊນ໌ (໘໖ ກິໂລເມຕຣ) ເຖິງວັນເຂົ້າພັຣษາ ຕ້ອງຈຳໃຈຈຳພັຣษາຢູ່ໃນເມືອງສາເກຕ ມີຄວາມຣະລຶກເຖິງພຣະບຣມສາສດາ ເມື່ອອອກພັຣษາແລ້ວຝົນຍັງຕົກຢູ່ ແຜ່ນດິນຍັງຊຸ່ມຊື້ນດ້ວຍນ້ຳ ເປັນຫຼົ່ມເລນ ໄດ້ເດີນທາງມາເຂົ້າເຝົ້າດ້ວຍຈີວຣທີ່ຊຸ່ມຊື້ນດ້ວຍນ້ຳອິດເຫນື່ອຍ ຊົງປຣາຣົກເຫຕຸນັ້ນ ຈຶ່ງຊົງອນຸຍາຕໃຫ້ພິກຂຸຜູ້ຈຳພັຣษາແລ້ວກຣານກຖິນໄດ້.

## ອານິສົງສ໌ ໕ ປະການຂອງພິກຂຸຜູ້ໄດ້ກຣານກຖິນ

ຊົງສແດງອານິສົງສ໌ ໕ ຂອງພິກຂຸຜູ້ໄດ້ກຣານກຖິນ ຄື

໑. ໄປໃສບໍ່ຕ້ອງບອກລາພິກຂຸອື່ນ (ຕາມຄວາມໃນສິກຂາບົທທີ່ ໖ ອເຈລວັຄຄ໌ ປາຈິຕຕິຍກັຕຫ໌)

໔. ໄປໃສບໍ່ຕ້ອງນຳໄຕຣຈີວຣໄປຄົບສຳຣັບ (ຕາມສິກຂາບົທທີ່ ໔ ຈີວຣວັຄຄ໌ ນິສສັຄຄິຍກັຕຫ໌)

[5] ປາເຖຍຍກະ ອ່ານວ່າ "ປາ-ເຖີຍ-ຍະ-ກະ"

໓. ສັນຄຕໂພຊ ຄື ສັນອາຫາຣຮວມກຸ່ມກັນໄດ້ (ຕາມສິກຂາບົທທີ່ ໔ ໂພຊນວັຄຄ໌ ປາຈິຕຕີຍກັຣຫ໌)

໔. ເກັບຈີວຣໄວ້ໄດ້ຕາມຕ້ອງການໂດຍບໍ່ຕ້ອງວິກັປ ຄືເຮັດໃຫ້ເປັນ ໔ ເຈົ້າຂອງ (ຕາມສິກຂາບົທທີ່ ໑ ຈີວຣວຣຄ ນິສສັຄຄີຍກັຕຫ໌)

໕. ຜ້າທີ່ເກີດຂຶ້ນໃນວັດນັ້ນເປັນຂອງພວກທ່ານ (ຄືພວກທ່ານມີສິທສີໄດ້ຮັບສ່ວນແບ່ງ ທິກຂຸເຂຕອື່ນມາກໍບໍ່ມີສິທສີ).

## ຊົງອນຸຍາຕໃຫ້ສູຕປະກາສການກຣານກຖິນ

ຊົງອນຸຍາຕໃຫ້ສົງຄ໌ສູຕປະກາສມອບຜ້າກຖິນ ແກ່ທິກຂຸອົງຄ໌ໃດອົງຄ໌ນຶ່ງ ໂດຍໃຫ້ຕັ້ງຍັຕຕິ ໑ ເທື່ອ ສູຕປະກາສຂໍຄວາມເຫັນພ້ອມ ໑ ເທື່ອ

## ຊົງສແດງເຣື່ອງກຖິນເປັນອັນກຣານແລະບໍ່ເປັນອັນກຣານ

ຊົງສແດງວ່າ ກຖິນບໍ່ເປັນອັນກຣານ ດ້ວຍພຽງສັກວ່າ ຂີດປະມາຕ, ຊັກຜ້າ, ກະຜ້າ, ຕັດຜ້າ, ຍຶບເນົາ, ຍຶບ, ທຳລູກດຸມ, ທຳຮັງດຸມ, ຕິດອນຸວາດ, ດາມຜ້າ, ຍ້ອມຜ້າເປັນສີໝົ່ນຮວມທັ້ງບໍ່ເປັນອັນກຣານດ້ວຍຜ້າທີ່ທຳນິມິຕ(ທຳເຄື່ອງໝາຍ) ຫຼືລຽບຄຽງໃຫ້ເຂົາຖວາຍ, ຜ້າຍືມມາ, ຜ້າເກັບໄວ້ຄ້າງຄືນ, ຜ້າທີ່ເປັນຂອງຕ້ອງສລະ(ນິສສັຄຄີຍ໌), ຜ້າທີ່ບໍ່ທຳພິນທຸ, ຜ້າບໍ່ໄດ້ເຮັດເປັນໄຕຣຈີວຣ, ຈີວຣນັ້ນມີຂັຕຫ໌ຕ່ຳກວ່າ ໕ ຂັນຄ໌ຊຶ່ງມີມົຕທົລ, ບໍ່ເສຣັຈໃນມື້ນັ້ນ, ບໍ່ໄດ້ຖວາຍໃຫ້ແກ່ທິກຂຸອົງຄ໌ນຶ່ງ, ທິກຂຜູ້ຢູ່ນອກສີມາອນຸໂມທນາກຖິນນັ້ນ

ແລ້ວຊົງສແດງວ່າ ກຖິນເປັນອັນກຣານດ້ວຍຜ້າໃຫມ່, ຜ້າທຽມໃຫມ່, ຜ້າເກົ່າ, ຜ້າບັງສຸກຸລ, ຜ້າຕົກຕາມຮ້ານຕລາດ ແລະຂໍ້ທີ່ມີນັຍຕົງຂ້າມກັບກຖິນບໍ່ເປັນອັນກຣານ.

# ຂໍ້ກຳຫນົດໃນການເດາະກຖິນ (ມາຕິກາ ໘)

ຊົງສແດງມາຕິກາ ຄື ແມ່ບົດ ຫຼືຂໍ້ກຳຫນົດ ໃນການເດາະກຖິນ ຣວມ ໘ ປະການ ຄື:-

໑. ເດີນທາງໄປທີ່ອື່ນບໍ່ຄິດຈະກລັບມາ

໒. ທຳຈີວຣເສຣັຈແລ້ວ

໓. ຕັ້ງໃຈເລີກເຣື່ອງການທຳຈີວຣ

໔. ຈີວຣທີ່ກຳລັງທຳຢູ່ທຳເສັຽຫຼືຫາຍຊະ

໕. ດ້ວຍໄດ້ຍິນຂ່າວ ຄື ທ່ານຈາກໄປດ້ວຍຄິດຈະກລັບມາອີກ ແຕ່ໄດ້ຍິນຂ່າວວ່າໃນວັດທີ່ທ່ານຢູ່ເຂົາເລີກທຳກັນແລ້ວ

໖. ດ້ວຍຫມົດຫວັງ ຄືຫວັງວ່າຈະໄດ້ຈີວຣແຕ່ກໍບໍ່ສົມຫວັງ

໗. ຢູ່ນອກເຂຕສີມາ ຄື ຄິດຈະກລັບມາທີ່ວັດນັ້ນ ຈົນຫມົດສມັຍຂອງກຖິນ

໘. ເລີກກຖິນພ້ອມກັບພິກຂຸທັ້ງຫລາຍ ຄື ເມື່ອພົ້ນກຳຫນົດ ກໍເປັນອັນເລີກກຖິນຮ່ວມກັນ

ຈາກນັ້ນເປັນຄຳອະທິບາຍມາຕິກາທັ້ງ ໘ ໃນຕອນທ້າຍໄດ້ສຣຸປກ່ຽວດ້ວຍປລິໂພຂ ໒ ປະການ ຄື

໓. ອາວາສປລິໂພສ ຄວາມຫ່ວງໃຍດ້ວຍວັດ (ຄືຕັ້ງໃຈຈະກລັບມາທີ່ວັດ)

໔. ຈີວຣປລິໂພສ ຄວາມຫ່ວງໃຍດ້ວຍຈີວຣ (ຄືຕັ້ງໃຈທຳຈີວຣກາຍກຳຫນົດ)

ຖ້າຫມົດປລິໂພສ ກໍເປັນອັນເລີກກຖິນ. ເມືອງປາເວຍຍກະ ຕັ້ງຢູ່ທາງທິສຕະວັນຕົກແຄວ້ນໂກສົລ ຄຳວ່າ "ປາເວຍຍກະ" ເປັນຊື່ຂອງພຣະພັທທວັຄຄີຍ໌ເຖຣະທັ້ງຫລາຍ ຊຶ່ງເປັນພີ່ນ້ອງຮ່ວມບິດາດຽວກັບພຣະເຈົ້າໂກສົລ ໃນບັຣດາທ່ານເຫຼົ່ານັ້ນ ຜູ້ເປັນພີ່ໃຫລ່ເປັນພຣະອນາຄາມີ ຄົນທີ່ເປັນນ້ອງສຸດທ້ອງເປັນພຣະໂສດາບັນ ບໍ່ມີໃຜເປັນພຣະອຣຫັນຕ໌ຫຼືປຸຖຸຊົນ (ວິ.ອ. ໓/໓໐໕/໑໙໑) ວ່າ "**ປາເວຍຍກະ**" ກໍມີ

ກຣານກຖິນ ເປັນວິທີຮ່ວມກັນຕັດຍິບຈີວຣຜືນໃດຜືນນຶ່ງ ໂດຍຂຶງໄມ້ກຖິນ (ໄມ້ສະດຶງ) ແລ້ວເອົາຜ້າທີ່ຈະຍິບເປັນຈີວຣເຂົ້າຂຶງທີ່ໄມ້ກຖິນຍິບຍ້ອມເສຣັຈແລ້ວ ຮ່ວມໃຈກັນຍກຈີວຣໃຫ້ພິກຂຸອົງຄ໌ນຶ່ງໃນນາມສົງຄ໌ ພິກຂຸທີ່ເຫລືອຮ່ວມອນຸໂມທນາ ເອີ້ນວ່າ "**ກຣານກຖິນ**"

ພິກຂຸທີ່ໄດ້ກຣານກຖິນ ຄື ຊົງຜ່ອນຜັນວິນັຍບາງຢ່າງເພື່ອຄວາມສະດວກໃນການທຳຈີວຣ ເປັນຣະຍະເວລາ ໔ ເດືອນ ຣວມກັບອານິສົງສ໌ການຈຳພັຣษາ ໑ ເດືອນ ເປັນ ໕ ເດືອນ (ອານິສົງສ໌ຈຳພັຣษາກັບອານິສົງສ໌ກຖິນເຫມືອນກັນ ພຽງແຕ່ຖ້າໄດ້ກຣານກຖິນດ້ວຍກໍຈະເພີ່ມເວລາອານິສົງສ໌ອອກໄປອີກ)

ໃນສິກຂາບົທທີ່ ໓ ໂກຊນວັຄຄ໌ ປາຈິຕຕິຍກັຕຫ໌ ອນຸຍາຕໃຫ້ລັນປຣັນປຣ (ໂກຊນະທີຫລັງ)ໄດ້ ໃນຄຣາວທີ່ຖວາຍຈີວຣແລະຄຣາວທີ່ທຳຈີວຣ ແຕ່ເຫຕຸໃດຈຶ່ງບໍ່ມີຣະບຸຢູ່ໃນອານິສົງສ໌ຂອງຜູ້ໄດ້ກຣານກຖິນ ຍັງເປັນທີ່ງົງຢູ່ ນັກວິນັຍຣທັ້ງຫລາຍຄວຣພິຈາຣຕາເອງຖ້ອນ

ອນຸວາຕ ຄື ຜ້າຂອບຈີວຣທັ້ງດ້ານຍາວທັ້ງດ້ານກວ້າງ (ວິ.ອ. ໓/໓໔໕/໔໑໗)

ທຳພິນທຸ ຄື ການທຳຜ້າຈີວຣທີ່ໄດ້ມາໃຫມ່ໃຫ້ເສັຽສີ ດ້ວຍສີຂຽວ **ຕົມ** ຫຼືຄລ້ຳທີ່ຈີວຣ ເພື່ອທຳຕະຫນິ ຕາມສິກຂາບົທທີ່ ໔ ສຸຣາປານວັຄຄ໌

ຈີວຣນິຂັຕຫ໌ ໕ ຄື ຈີວຣທີ່ຕັດຍົບປຣາກຜກະທົງ (ຜ້າທ່ອນນຶ່ງ ໆ ມີລັກษณะ ເຫມືອນກະທົງນາ ມີຣຣູປສີ່ຫຼ່ຽມ) ກະທົງໃຫລ່ ກະທົງເລັກ ໂດຍມີຈຸດຄັ່ນດຸຈຄັນນາ ຍືນ ຣະຫວ່າງກະທົງຈີວຣ ແບ່ງເປັນ ໕ ກະທົງ (ເບິ່ງ ວິ.ອ. ໖/໖໐໗/໖໕໔/໑໔໗, ໔໑໗).

ຜ້າຕົກຕາມຮ້ານ ຄື ຜ້າເກົ່າທີ່ຕົກຢູ່ຂ້າງປະຕູຮ້ານຕລາດ ຊຶ່ງມີຜູ້ເກັບມາຖວາຍ ( ວິ.ອ.໖/໖໐໙/໑໔໗ )



ກຖິນເດາະ ຫມາຍເຖິງ ກຖິນເສັຽຫາຍ ບໍ່ມີອານິສົງສ໌ ໃຊ້ບໍ່ໄດ້ ທີກບຸທມົດໂອກາສຈະ ໄດ້ປະ ໂຍຊນ໌ຈາກກຖິນ

ປລິໂພຣ ໃນທາງວິນັຍຫມາຍເຖິງ ຄວາມກັງວົລທີ່ເປັນເຫຕຸໃຫ້ກຖິນຍັງບໍ່ເດາະ ຄືຍັງ ຮັກษาອານິສົງສ໌ກຖິນ ແລະເຂຕແຫ່ງຈີວຣກາລ ຕາມກຳຫນົດໄດ້ ຖ້າທີກບຸທລີກໄປໂດຍຄິດວ່າ "ຈະບໍ່ກລັບມາອີກ" ຈີວຣ**ປລິໂພຣ**[6]ຂາດກ່ອນໃນ ຂຕະທີ່ຢູ່ກາຍໃນສີມານັ້ນເອງ ອາວາສປລິໂພຣຂາດ ເມື່ອກ້າວລ່ວງສີມາໄປແລ້ວ ( ວິ.ອ.໖/໖໑໑/໑໔໗ )

---

[6] **ປລິໂພຣ** [ປະ-ລິ-ໂພດ] (ມຄ. ປລິໂພຣ) ນ. ຄວາມຜູກພັນ, ຄວາມກັງວົລ, ຄວາມຫ່ວງໃຍ.

# ຫມວດປກິຕກະ

## ກັມມະວາຈາກຖິນ

*ສັນນວິນັຍນັ້ນຈັກເປັນສາສດາຂອງພວກທ່ານທັ້ງຫລາຍ ໂດຍການລ່ວງໄປ ແຫ່ງເຮົາ*

### ຄໍາຖວາຍຜ້າກຖິນ



ອິມັງ ຫັນເຕ, ສະປະຣິວາຣັງ, ກະຖິນຈະຈີວະຣະທຸສສັງ, ສັງພັສສະ, ໂອໂຕຊະຍາມະ, ສາຊຸ ໂນ ຫັນເຕ, ສັງໂຜ, ອິມັງ, ສະປະຣິວາຣັງ, ກະຖິນະທຸສສັງ ປະພິຄັຄັດຫາຕຸ, ປະພິຄ ຄະເຫຕວາ ຈະ, ອິມິນາ ທຸສເສນະ, ກະຖິນັງ, ອັຕຖະຣະຕຸ, ອັມຫາກັງ, ທີພະຣັຕຕັງ ຫິຕາຍະ ສຸຂາຢະ.

ຂ້າແຕ່ພຣະສົງພ໌ຜູ້ຈເຣີນ ຂ້າພເຈົ້າທັ້ງຫລາຍ ຂໍນ້ອມຖວາຍຜ້າກຖິນຈີວຣ ກັບທັ້ງບໍຣິວາຣນີ້ ແດ່ພຣະສົງພ໌ ຂໍພຣະສົງພ໌ຈົ່ງຮັບຜ້າກຖິນກັບທັ້ງບໍຣິວາຣນີ້ຂອງຂ້າພເຈົ້າ

ທັ້ງຫລາຍ ຮັບແລ້ວ ຈົ່ງກຣານກະກິນ ດ້ວຍຜ້ານີ້ ເພື່ອປະໂຍຊນ໌ແລະຄວາມສຸຂ ແກ່ຂ້າພເຈົ້າທັ້ງຫລາຍ ສີ້ນກາລນານ ເທີ້ນ.

# ຄໍາອປໂລກນ໌ກະກິນ

## ອົງຄ໌ທີ່ ໑

ຜ້າກະກິນທານ ກັບທັ້ງຜ້າອນິສັງສບໍຣິວາຣທັ້ງປວງນີ້ ເປັນຂອງ...... ພ້ອມດ້ວຍ.......ຜູ້ປະກອບດ້ວຍສັທທາອຸຕສາຫະ ພ້ອມພຽງກັນນຳມາຖວາຍແດ່ພຣະກິກຂຸສົງຄ໌ ຜູ້ຢູ່ຈຳພັຣຍາຖ້ວນໄຕຣມາສໃນອາວາສນີ້

ກໍແລ ຜ້າກະກິນທານນີ້ ເປັນຂອງບໍຣິສຸທສິ່ງດຸຈເລື່ອນລອຍມາໂດຍນະກາກາສແລ້ວ ແລຕົກລົງ ໃນທີ່ປະຊຸມສົງຄ໌ ຈະໄດ້ຈຳເພາະເຈາະຈົງລົງວ່າ ເປັນຂອງກິກຂຸອົງຄ໌ໃດ ອົງຄ໌ນຶ່ງກໍຫາບໍ່ໄດ້ ມີພຣະບໍຣົມພຸທສານຸຍາຕໄວ້ວ່າ ໃຫ້ພຣະສົງຄ໌ທັ້ງປວງຍ່ອມອນຸຍາຕໃຫ້ແກ່ກິກຂຸອົງຄ໌ນຶ່ງ ເພື່ອຈະເຮັດຊື່ງກະກິນັຕຖາຣກິຈ ຕາມພຣະບໍຣົມພຸທສານຸຍາຕ ແລະມີຄຳພຣະອັຖກຖາຈາຣຍ໌ຜູ້ຮູ້ພຣະບໍຣົມພຸທສາຣິບາຍສັງວັຣຕນາໄວ້ວ່າ ກິກຂຸອົງຄ໌ໃດປະກອບດ້ວຍສີລສຸຕາສິຄຸຕ ມີສຕິປັຍຍາສາມາຖຮູ້ສັມນ໌ ໗ ປະກາຣ ມີບຸຣພກິຈເປັນຕົ້ນ ກິກຂຸອົງຄ໌ນັ້ນຈຶ່ງສົມຄວຣເພື່ອຈະເຮັດຊື່ງກະກິນັຕຖາຣກິຈ ຕາມພຣະບໍຣົມພຸທສານຸຍາຕໄດ້

ບັດນີ້ ພຣະສົງຄ໌ທັ້ງປວງ ຈະເຫັນສົມຄວຣແກ່ກິກຂຸອົງຄ໌ໃດ ຈົ່ງພ້ອມກັນຍ່ອມອນຸຍາຕໃຫ້ແກ່ກິກຂຸອົງຄ໌ນັ້ນ ເທີ້ນ. (ບໍ່ຕ້ອງສາທຸ)

**ອົງຄ໌ທີ່ ໔**

ຜ້າກະຖິນທານ ກັບທັງຜ້າອານິສົງສ໌ບໍຣິວາຣທັງປວງນີ້ ຂ້າພເຈົ້າພິຈາຣນາ ເຫັນສົມຄວຣແກ່.....ເປັນຜູ້ມີສຕິປັຎຎາສາມາຖ ເພື່ອກະທຳກະຖິນັຕຖາຣກິຈໃຫ້ ຖືກຕ້ອງຕາມພຣະບໍຣົມພຸທສານຸຎາຕໄດ້ ຖ້າພຣະພິກຂຸອົງຄ໌ໃດເຫັນບໍ່ສົມຄວຣ ຈົ່ງທັກທ້ວງຂຶ້ນໃນທ່າມກາງສົງຄ໌ (ຫຍຸດຖ້າບຶດນຶ່ງ) ຖ້າເຫັນສົມຄວຣແທ້ແລ້ວ ຈົ່ງໃຫ້ສັທທາສັຎຎາ ສາທຸກາຣຂຶ້ນໃຫ້ພ້ອມກັນ ເທີ້ນ.(ສາທຸ ພ້ອມກັນ)

## ແບບກັມມະວາຈາສູຕໃຫ້ຜ້າກະຖິນ

ນະໂມ ຕັສສະ ຠະຄະວະໂຕ ອະຣະຫະໂຕ ສັມມາສັມພຸທັສສະ.

ນະໂມ ຕັສສະ ຠະຄະວະໂຕ ອະຣະຫະໂຕ ສັມມາສັມພຸທັສສະ.

ນະໂມ ຕັສສະ ຠະຄະວະໂຕ ອະຣະຫະໂຕ ສັມມາສັມພຸທັສສະ.

ສຸນາຕຸ ເມ ຠັນເຕ ສັງໂຆ, ອິທັງ ສັງຆັສສະ ກະຖິນະທຸສສັງ ອຸປປັນນັງ, ຢະທິ ສັງຆັສສະ ປັຕຕະກັລລັງ, ສັງໂຆ ອິທັງ ສັງຆັສສະ ກະຖິນະທຸສສັງ ອາຢສມະໂຕ ອິຕຖັນນາມັສສະ ທະເທຍຢະ, ກະຖິນັງ ອັຕຖະຣິຕຸງ, ເອສາ ຎັຕຕິ.

ສຸນາຕຸ ເມ ຠັນເຕ ສັງໂຆ, ອິທັງ ສັງຆັສສະ ກະຖິນະທຸສສັງ ອຸປປັນນັງ, ສັງໂຆ ອິມັງ ກະຖິນະທຸສສັງ ອາຢສມະໂຕ ອິຕຖັນນາມັສສະ ເທຕິ, ກະຖິນັງ ອັຕຖະຣິຕຸງ, ຢັສສາຢັສມະໂຕ ຂະມະຕິ, ອິມັສສະ ກະຖິນະທຸສສັສະ, ອາຢັສມະໂຕ

## ໝວດປະກິຕກະ ກັມມະວາຈາກະຖິນ

ອິຕຖັນນາມັສສະ ທານັງ, ກະຖິນັງ ອັຕຖະຣິຕຸງ, ໂສ ຕຸຓ຺ຫັສສະ, ຢັສສະ ນັກຂະມະຕິ, ໂສ ຠາເສຍຍະ.

ທິນນັງ ອິທັງ ສັງເຆນະ, ກະຖິນະທຸສສັງ ອາຢັສ຺ມະໂຕ ອິຕຖັນນາມັສສະ ກະຖິນັງ ອັຕຖະຣິຕຸງ, ຂະມະຕິ ສັງຆັສສະ, ຕັສ຺ມາ ຕຸຓ຺ຫີ, ເອວະເມຕັງ ຘາຣະຢາມິ.

ທ່ານຂ້ານ້ອຍ ຂໍສົງຆ໌ຈົ່ງຟັງຂ້າພະເຈົ້າ ຜ້າກະຖິນຜືນນີ້ເກີດຂຶ້ນແລ້ວແກ່ສົງຆ໌ ຖ້າຄວາມພ້ອມພຽງຂອງສົງຆ໌ເຖິງທີ່ແລ້ວ ສົງຆ໌ຄວນໃຫ້ຜ້າກະຖິນຜືນນີ້ແກ່ພິກຂຸຜູ້ມີຊື່ນີ້ ເພື່ອກຣານກະຖິນ ນີ້ເປັນຍັດຕິ.

ທ່ານຂ້ານ້ອຍ ຂອງສົງຆ໌ຈົ່ງຟັງຂ້າພະເຈົ້າ ຜ້າກະຖິນຜືນນີ້ເກີດຂຶ້ນແລ້ວແກ່ສົງຆ໌ ສົງຆ໌ໃຫ້ຜ້າກະຖິນຜືນນີ້ ແກ່ພິກຂຸຜູ້ມີຊື່ນີ້ ເພື່ອກຣານກະຖິນການໃຫ້ຜ້າກະຖິນຜືນນີ້ ແກ່ພິກຂຸຜູ້ມີຊື່ນີ້ ເພື່ອກຣານກະຖິນ ຍ່ອມພໍໃຈແກ່ທ່ານຜູ້ໃດ ທ່ານຜູ້ນັ້ນຄວນເປັນຜູ້ນິ່ງ ບໍ່ມັກທ່ານຜູ້ໃດ ທ່ານຜູ້ນັ້ນຄວນເວົ້າ ຜ້າກະຖິນຜືນນີ້ ສົງຆ໌ໃຫ້ແລ້ວແກ່ພິກຂຸຜູ້ມີຊື່ນີ້ເພື່ອຈະກຣານກະຖິນຍ່ອມພໍໃຈແກ່ສົງຆ໌ ເຫຕຸນັ້ນຈຶ່ງນິ່ງຢູ່ ຂ້າພະເຈົ້າຊົງຄວາມນີ້ໄວ້ດ້ວຍຢ່າງນີ້.

(ຄຳວ່າ **ອິຕຖັນນາມັສສະ** ໃຊ້ປ່ຽນຕາມຊື່ຂອງພິກຂຸຜູ້ຮັບກະຖິນ ເຊັ່ນ **ຂັນຕິສັນໂມ** ປ່ຽນເປັນ **ຂັນຕິສັນມັສສະ** ຖ້າພິກຂຸນັ້ນອ່ອນກວ່າຜູ້ສູດ ຕ້ອງຕັດ**ອາຢັສ຺ມະໂຕ** ອອກເສັຽ ແລ້ວເຕີມ**ພິກຂຸໂນ** ຕໍ່ທ້າຍຄຳ **ອິຕຖັນນາມັສສະ** ເຊັ່ນ **ອາຢັສ຺ມະໂຕ ອິຕຖັນນາມັສສະ** ປ່ຽນເປັນ **ອິຕຖັນນາມັສສະ ພິກຂຸໂນ**)

# ຄຳກຣານກກິນ

ຜ້າສັງໝາຜິ ອິມາປະ ສັງໝາຜິຍາ ກະກິນັງ ອັຕຖະຣາມິ.

ຜ້າອຸຕຕຣາສົງຄ໌ ອິມານາ ອຸຕຕະຣາສັງເຜນະ ກະກິນັງ ອັຕຖະຣາມິ.

ຜ້າອັນຕຣວາສົກ ອິມານາ ອັນຕະຣະວາສະເກນະ ກະກິນັງ ອັຕຖະຣາມິ.

# ຄຳອນຸໂມທນາກກິນ

ອັນທີກບຸຜູ້ກຣານກກິນນັ້ນ ຄວຣເຂົ້າໄປຫາສົງຆ໌ ຫົ່ມຜ້າອຸຕຣາສົງຄ໌ລວ່ງງບ່າ ປະຄອງອັລຊຸລີ ກ່າວຢ່າງນີ້ວ່າ

"ອັຕຖະຕັງ ອາວຸໂສ (ກັນເຕ) ສັງໝັສສະ ກະກິນັງ, ສັມມີໂກ ກະກິນັຕຖາໂຣ, ອະນຸໂມທະຖະ. ທ່ານຂ້ານ້ອຍ ກກິນຂອງສົງໝ໌ກຣານແລ້ວ ກາຣກຣານກກິນເປັນສັມມ໌ ຂໍທ່ານທັ້ງຫລາຍ ອນຸໂມທນາຖ້ອນ."

ກິກບຸຜູ້ອນຸໂມທນາເຫຼົ່ານັ້ນ ຄວຣຫົ່ມຜ້າອຸຕຣາສົງຄ໌ລວ່ງງບ່າ ປະຄອງ ອັລຊຸລີກ່າວຢ່າງນີ້ວ່າ

"ອັຕຖະຕັງ ກັນເຕ (ອາວຸໂສ) ສັງໝັສສະ ກະກິນັງ, ສັມມີໂກ ກະກິນັຕຖາໂຣ, ອະນຸໂມທາມະ. ຜູ້ມີອາຍຸ ກກິນຂອງສົງໝ໌ກຣານແລ້ວ ກາຣກຣານກກິນເປັນສັມມ໌ ເຮົາທັ້ງຫລາຍ ອນຸໂມທນາ."

# ອັຖກຖາ ມຫາວັຄຄ໌ ຫາຄ ໔ ກຖິນຂັນສກະ

ຫຼັ້ມ ໗ - ພຣະວິນັຍປິຜົກ ມຫາວັຄຄ໌ ຫຼັ້ມ ໕ ຫາຄ ໔ - ຫນ້າທີ່ ໔໔໖



# ຫິກບຸປາໄກຍຣັກເດີນທາງເຂົ້າຝົ້າເປັນຕົ້ນ

<u>ເຣື່ອງຫິກບຸຊາວເມືອງປາເກຍຍະ</u>

ວິນິຈລັຍໃນກຖິນຂັນສກະ ຄວຣຮູ້ດັ່ງນີ້ :-

ບົທວ່າ ***ປາເກຍຸຍກາ*** ມີຄວາມວ່າ ເປັນຊາວຈັງຫວັດປາເກຍຍະ.

ມີຄໍາອຣິບາຍວ່າ ທາງດ້ານທິສຕະວັນຕົກໃນແຄວ້ນໂກສົລ ມີຈັງຫວັດຊື່***ປາເກຍຍະ***, ຫິກບຸເຫຼົ່ານັ້ນມີປົກຕິຢູ່ໃນຈັງຫວັດນັ້ນ. ຄໍາວ່າ ***ປາເກຍຸຍກາ***ນັ້ນ ເປັນຊື່ຂອງພວກພຣະຫັທຫວັຄຄິຍເຖຣະ ຊຶ່ງເປັນພີ່ນ້ອງຮ່ວມພຣະບິດາຂອງພຣະເຈົ້າໂກສົລ. ໃນພຣະ

ເຖຣະ ໑໐ ອົງຄ໌ນັ້ນ ອົງຄ໌ທີ່ເປັນໃຫຍ່ກວ່າທຸກໆ ອົງຄ໌ ເປັນພຣະອນາຄາມີ, ອົງຄ໌ທີ່ດ້ອຍກວ່າທຸກໆ ອົງຄ໌ເປັນພຣະໂສດາບັນ, ທີ່ເປັນພຣະອຣຫັນຕ໌ຫຼືປຸຖຸຊົນ ແມ້ອົງຄ໌ດຽວກໍບໍ່ມີ.

ບົທວ່າ ***ອາຣຍຸຍກາ*** ມີຄວາມວ່າ ມີປົກຕິຢູ່ປ່າ ດ້ວຍອຳນາຈສມາທານສຸດົງຄ໌, ບໍ່ແມ່ນສັກວ່າຢູ່ປ່າ. ເຖິງໃນຂໍ້ທີ່ກິກບຸເຫຼົ່ານັ້ນເປັນຜູ້ຖືອບິຕຊາບາຕເປັນຕົ້ນ ກໍມີນັຍເຫມືອນກັນ.

ອັນທີ່ຈິງ ຄຳວ່າ ມີປົກຕິຢູ່ປ່າ ນີ້ ທ່ານກ່າວດ້ວຍອຳນາຈສຸດົງຄ໌ທີ່ເປັນປະສານ ແຕ່ກິກບຸເຫຼົ່ານີ້ ສມາທານສຸດົງຄ໌ທັ້ງ ໑໓ ບາດດຽວ.

ບົທວ່າ ***ອຸທກສງຄເທ*** ມີຄວາມວ່າ ເມື່ອພູມີກາຄຖືກນ້ຳຖ້ວມ ຄືຂັງແຊ່ແລ້ວ.

ອະທິບາຍວ່າ ທັ້ງທີ່ດອນທັ້ງທີ່ລຸ່ມ ເປັນທີ່ມີນ້ຳເປັນອັນດຽວກັນ.

ບົທວ່າ ***ອຸທກຈິກຸຂລຸເລ*** ມີຄວາມວ່າ ໃນທີ່ຊຶ່ງທ່ານທັ້ງຫລາຍເຫຍີຍບແລ້ວເຫຍີຍບແລ້ວ ນ້ຳໂຄລນຍ່ອມກະຈູດຂຶ້ນເຖິງຕະໂພກ, ທາງລື່ນເຊັ່ນນີ້.

ບົທວ່າ ***ໂອກປຸຕຸເຕາທີ*** ມີຄວາມວ່າ ຊຸ່ມໂຊກດ້ວຍນ້ຳ.

ໄດ້ຍິນວ່າ ຈີວຣຂອງພວກທ່ານ ມີເນື້ອແໜ່ນ, ນ້ຳຊຶ່ງຕົກທີ່ຈີວຣເຫຼົ່ານັ້ນ ຈຶ່ງບໍ່ໄຫລໄປເພາະເປັນຜ້າເນື້ອແໜ່ນ, ຍ່ອມຕິດຄ້າງຢູ່ເຫມືອນຫ່ອຜູກໄວ້ ເພາະສະນັ້ນ ທ່ານຈຶ່ງກ່າວວ່າ ມີຈີວຣຊຸ່ມໂຊກດ້ວຍນ້ຳ. ປາກະວ່າ ***ໂອພປຸຕຸເຕາທີ*** ກໍມີ.

ວິນິຈລັຍໃນຄຳວ່າ ***ອວິວທມານາ ວສຸສໍ ວສິມຸຫາ*** ນີ້ ຄວຣຮູ້ດັ່ງນີ້ :-

ກິກບຸເຫຼົ່ານັ້ນຢູ່ບໍ່ຜາສຸກ ເພາະບໍ່ມີຄວາມມ່ວນດ້ວຍເສນາສນະໃນການທີ່ຕົນເປັນອາຄັນຕຸກະ ແລະເພາະເປັນຜູ້ກະວົນກະວາຍໃນໃຈ ດ້ວຍບໍ່ໄດ້ເຝົ້າພຣະຜູ້ມີພຣະພາຄເຈົ້າ ເພາະສະນັ້ນ ພວກທ່ານຈຶ່ງບໍ່ທູລວ່າ ພວກຂ້າພຣະອົງຄ໌ບໍ່ວິວາທກັນ ຈຳພັຣຍາເປັນຜາສຸກ.

ຂໍ້ວ່າ ***ສນຸນື ກຖຳ ກຕຸວາ*** ມີຄວາມວ່າ ພຣະຜູ້ມີພຣະພາຄເຈົ້າຕຣັສສອນ <u>ອນມຕັຄຄິຢກຖາ</u>ແກ່ກິກຂຸເຫຼົ່ານັ້ນ. ທ່ານທັ້ງໝົດນັ້ນ ໄດ້ບັຣລຸພຣະອຣຫັຕໃນເວລາຈົບກຖາ ແລ້ວໄດ້ເຫາະໄປໃນອາກາສ ຈາກທີ່ຊຶ່ງຕົນນັ່ງບາດດຽວ.

ພຣະສັມມະສັງຄາຫກາຈາຣຍ໌ທັ້ງຫລາຍຫມາຍເອົາອນມຕັຄຄິຍກຖານັ້ນກ່າວວ່າ ***ສນຸນື ກຖຳ ກຕຸວາ*** ພາຍຫລັງ ພຣະຜູ້ມີພຣະພາຄເຈົ້າຊົງດຳຣິວ່າ ຖ້າການກຣານກຖິນ ຈັກໄດ້ເປັນການທີ່ເຮົາໄດ້ບັຍລັຕິແທ້ແລ້ວ ກິກຂຸເຫຼົ່ານັ້ນຈະເກັບຈີວຣໄວ້ຜືນນຶ່ງແລ້ວມາກັບອັນຕຣວາສົກແລະອຸຕຣາສົງຄ໌ຈະບໍ່ຕ້ອງລຳບາກຢ່າງນັ້ນ; ກໍສັມມະດາການກຣານກຖິນນີ້ ອັນພຣະພຸທສເຈົ້າທຸກໆ ພຣະອົງຄ໌ ຊົງບັຍລັຕິແລ້ວ ດັ່ງນີ້. ມີພຣະປະສົງຄ໌ຈະຊົງອນຸລາຕການກຣານກຖິນ ຈຶ່ງຕຣັສເອີ້ນກິກຂຸທັ້ງຫລາຍມາ, ກໍແລ ເມື່ອຕຣັສເອີ້ນມາແລ້ວ ຈຶ່ງຕຣັສຄຳວ່າ ***ອນຸຊານາມິ ກິກຸຂເວ*** ເປັນອາທິ.

# ວ່າດ້ວຍອານິສົງສ໌ ໕

ວິນິຈສັຍໃນຄຳນັ້ນ ຄວຣຮູ້ດັ່ງນີ້ :-

ໃນຄຳວ່າ ***ອຕຸຖຕກຖິນານໍ ໂວ*** ນີ້ ***ໂວ*** ອັກຂຣ ສັກວ່ານິບາຕ. ຄວາມວ່າ ຜູ້ກຣານກຖິນແລ້ວ.

ຈິງຢູ່ ເມື່ອເປັນຢ່າງນັ້ນ ຄຳວ່າ ***ໂສ ເນສໍ ກວິສຸສຕິ*** ຂ້າງຫນ້າ ຈຶ່ງຈະສົມກັນ.

ອີກຢ່າງນຶ່ງ ບົທວ່າ ***ໂວ*** ນີ້ ເປັນສັຍກີວິກັຕຕິນັ່ນເອງ. ສ່ວນໃນຄຳວ່າ ***ໂສ ເນສໍ*** ນີ້ ມີຄວາມວ່າ ຈີວຣທີ່ເກີດຂຶ້ນນັ້ນ ຈັກເປັນຂອງກິກຂຸທັ້ງຫລາຍ ຜູ້ກຣານກຖິນແລ້ວນະ.

ບັຣດາອານິສົງສ໌ ໕ ນັ້ນ ຂໍ້ວ່າ ***ອນາມນຸຕຈາໂຣ*** ມີຄວາມວ່າ ກຖິນອັນສົງຄ໌ຍັງບໍ່ຮື້[7] ພຽງໃດ, ການທ່ຽວໄປບໍ່ບອກລາ ຈັກຄວຣພຽງນັ້ນ ຄືຈັກບໍ່ເປັນອາບັຕິເພາະຈາຣິຕຕ ສິກຂາບົທ.

ຂໍ້ວ່າ ***ອສມາທານຈາໂຣ*** ໄດ້ແກ່ ທ່ຽວໄປບໍ່ຕ້ອງເອົາໄຕຣຈີວຣໄປດ້ວຍ.

ຄວາມວ່າ ການຢູ່ປຣາສຈາກຈີວຣ ຈັກຄວຣ.

ຂໍ້ວ່າ ***ຄຓໂກຊຸນໍ*** ມີຄວາມວ່າ ແມ້ການລັບຄຓໂກຊຸນ໌ ຈັກຄວຣ.

ຂໍ້ວ່າ ***ຍາວທຕຸຖຈີວຣໍ*** ມີຄວາມວ່າ ຕ້ອງການດ້ວຍຈີວຣເທົ່າໃດ, ຈີວຣເທົ່ານັ້ນ ບໍ່ຕ້ອງອະທິຖານ ບໍ່ຕ້ອງວິກັປ ຈັກຄວຣ.

ຂໍ້ວ່າ ***ໂຍ ຈ ຕຕຸຖ ຈີວຣຸປຸປາໂທ*** ມີຄວາມວ່າ ຈະເປັນຈີວຣຂອງກິກບຸສາມເຕຣຜູ້ນໍຣຕ ກາພໃນສີມາທີ່ໄດ້ກຣານກຖິນແລ້ວນັ້ນ ຫຼືຈີວຣທີ່ທາຍົກຖວາຍສະເພາະສົງຄ໌ ຫຼືຈີວຣທີ່ຈ່າຍມາດ້ວຍຄ່າ**ກັປປນາ**[8]ຂອງສົງຄ໌ ຊຶ່ງເກີດຂຶ້ນໃນສີມານັ້ນ ກໍຕາມທີ, ຈີວຣໃດ ເປັນຂອງສົງຄ໌ເກີດຂຶ້ນດ້ວຍອາການຢ່າງໃດຢ່າງນຶ່ງ, ຈີວຣນັ້ນ ຈັກເປັນຂອງພວກທ່ານ.

# ວ່າດ້ວຍຜູ້ໄດ້ກຣານກຖິນ

ວິນິຈສັຍໃນຄໍາວ່າ ***ເອວຄຸຈ ປນ ກິກຂເວ ກຖິນໍ ອຕຸຖຣິຕພຸພໍ*** ນີ້ ຄວຣຮູ້ ດັ່ງນີ້:-

ໃນມຫາປັຈຈຣີແກ້ວ່າ ຖາມວ່າ ໃຜໄດ້ກຣານກຖິນ ໃຜບໍ່ໄດ້?

---

[7] **ອຸພຸກຕ** ແປລຕາມພາກຍ໌ຂເມຣວ່າ "ດໂຄະ".

[8] **ກັປປນາ** (ມຄ. ກປຸປນ) ກ. ເຈາະຈົງໃຫ້. ນ. ການຕຽມ, ການກະທໍາ, ຄວາມດໍາຣິ; ຄວາມສໍາເຣັຈ; ທີ່ ຊຶ່ງເຈົ້າຂອງອຸທິສຜົລປະໂຍຊນ໌ໃຫ້ແກ່ວັດ; ສ່ວນບຸລທີ່ຜູ້ທໍາອຸທິສໃຫ້ແກ່ຜູ້ຕາຍ.

ຕອບວ່າ ວ່າດ້ວຍອຳນາຈແຫ່ງຈຳນວນກ່ອນ. ພິກຂຸ ໕ ອົງຄ໌ເປັນຢ່າງຕ່ຳຍ່ອມໄດ້ກຣານ, ຢ່າງສູງແມ້ແສນກໍໄດ້. ຫຍ່ອນ ໕ ອົງຄ໌ ບໍ່ໄດ້.

ວ່າດ້ວຍອຳນາຈພິກຂຸຜູ້ຈຳພັຣษາ. ພິກຂຸຜູ້ຈຳພັຣษາໃນປຸຣິມພັຣษາ ປວາຣຕາໃນວັນປກົມປວາຣຕາແລ້ວ ຍ່ອມໄດ້, ພິກຂຸຜູ້ມີພັຣษາຂາດຫຼືຈຳພັຣษາໃນປັຈຈິມພັຣษາຍ່ອມບໍ່ໄດ້. ແມ້ພິກຂຸທີ່ຈຳພັຣษາໃນວັດອື່ນກໍບໍ່ໄດ້. ແລະພິກຂຸທັ້ງປວງຜູ້ຈຳພັຣษາຫລັງເປັນ**ຄຕປູຣກະ**[9]ຂອງພິກຂຸຜູ້ຈຳພັຣษາຕົ້ນກໍໄດ້, ແຕ່ພວກທ່ານບໍ່ໄດ້ອານິສົງສ໌; ອານິສົງສ໌ຍ່ອມສຳເຣັຈແກ່ພວກພິກຂຸນອກນີ້ເທົ່ານັ້ນ.

ຖ້າພິກຂຸຜູ້ຈຳພັຣษາຕົ້ນມີ ໔ ອົງຄ໌ຫຼື ໓ ອົງຄ໌ຫຼື ໒ ອົງຄ໌ຫຼືອົງຄ໌ດຽວ, ຄວຣນິມົນຕ໌ພິກຂຸຜູ້ຈຳພັຣษາຫລັງມາເພີ່ມໃຫ້ຄົບຄຕະແລ້ວ ກຣານກຖິນຖ້ອນ. ຖ້າພິກຂຸຜູ້ຈຳພັຣษາຕົ້ນມີ ໔ ອົງຄ໌, ມີສາມເຕຣອາຍຸຄົບຢູ່ອົງຄ໌ນຶ່ງ, ຫາກສາມເຕຣນັ້ນອຸປສົມບົທໃນພັຣษາຫລັງ, ທ່ານເປັນຄຕປູຣກະໄດ້ ທັ້ງໄດ້ອານິສົງສ໌ດ້ວຍ.

ແມ້ໃນຂໍ້ວ່າ ມີພິກຂຸ ໓ ສາມເຕຣ ໒, ມີພິກຂຸ ໒ ສາມເຕຣ ໓, ມີພິກຂຸອົງຄ໌ດຽວສາມເຕຣ ໔ ນີ້ ກໍມີນັຍຢ່າງນີ້ແລ. ຖ້າພິກຂຸຜູ້ຈຳພັຣษາຕົ້ນ ບໍ່ເຂົ້າໃຈໃນກາຣກຣານກຖິນ, ຄວຣຫາພຣະເຖຣະຜູ້ກ່າວຄັມພີຣ໌ຂັນສກະ ຊຶ່ງເຂົ້າໃຈໃນກາຣກຣານກຖິນ ນິມົນຕ໌ມາ: ທ່ານສອນໃຫ້ສູຕກັມມະວາຈາ ໃຫ້ກຣານກຖິນ ແລ້ວຮັບທານແລ້ວຈັກໄປ. ສ່ວນອານິສົງສ໌ຍ່ອມສຳເຣັຈແກ່ພິກຂຸນອກນີ້ເທົ່ານັ້ນ.

---

[9] **ຄຕປູຣກະ** (ອ່ານວ່າ ຄະນະປູຣະກະ) ແປລວ່າ *ຜູ້ທຳໃຫ້ຄຕະເຕັມຈຳນວນ, ຜູ້ທຳໃຫ້ຄົບອົງຄ໌ປະຊຸມ*

# ວ່າດ້ວຍຜູ້ຖວາຍກຖິນ

ກຖິນ ໃຜຖວາຍ ຈຶ່ງໃຊ້ໄດ້?

ບຸຄຄົລຜູ້ໃດຜູ້ນຶ່ງຈະເປັນເທວດາຫຼືມນຸຫຍ໌ຫຼືສຫາສັມມິກທັ້ງ ໕ ຄົນໃດ ຄົນນຶ່ງຖວາຍກໍໃຊ້ໄດ້.

ສັມມ໌ນຽມຂອງຜູ້ຖວາຍກຖິນ ມີຢູ່; ຖ້າເຂົາບໍ່ຮູ້ສັມມ໌ນຽມນັ້ນ.

ຈຶ່ງຖາມວ່າ ກຖິນຄວຣຖວາຍແນວໃດຂ້ານ້ອຍ ພິກຂຸຄວຣບອກເຂົາຢ່າງນີ້ວ່າ ຄວຣຖວາຍຜ້າພໍທຳໄຕຣຈີວຣຜືນໃດຜືນນຶ່ງໄດ້ ໃນເວລາກາງວັນວ່າ ພວກຂ້າພເຈົ້າຖວາຍ ຜ້າກຖິນຈີວຣ, ຄວຣຖວາຍເຂັມເທົ່ານີ້ເຫຼັ້ມດ້າຍເທົ່ານີ້ ນ້ຳຍ້ອມເທົ່ານີ້ ເພື່ອທຳຈີວຣນັ້ນ ແລະຖວາຍຍາຄູແລະກັຕແກ່ພວກພິກຂຸເທົ່ານີ້ອົງຄ໌ຜູ້ຊ່ວຍທຳ. ຝ່າຍພິກຂຸຜູ້ຈະກຣານ ກຖິນຄວຣກຣານກຖິນຊຶ່ງເກີດຂຶ້ນໂດຍສັມມ໌ໂດຍຊອບ. ເມື່ອຈະກຣານ ຕ້ອງຮູ້ ຈັກສັມມ໌ນຽມ.

ຈິງຢູ່ ແມ້ຜ້າທີ່ເປື້ອນນ້ຳເຂົ້າ ໂດຍສືບເນື່ອງມາແຕ່ເຣື່ອງຊ່າງຫູກບາດດຽວກໍ ໃຊ້ບໍ່ໄດ້, ແມ້ຜ້າເກົ່າກໍໃຊ້ບໍ່ໄດ້; ເພາະສະນັ້ນ ໄດ້ຜ້າສຳຫຼັບກຣານກຖິນແລ້ວ ຕ້ອງຊັກໃຫ້ ສະອາດ ກະຕຽມເຄື່ອງມືສຳຫຼັບທຳຈີວຣມີເຂັມເປັນຕົ້ນໄວ້ແລ້ວ ພ້ອມດ້ວຍພິກຂຸ ທັ້ງຫລາຍ ຊ່ວຍກັນຍິບຍ້ອມຈີວຣທີ່ຍິບເສຣັຈ ໃຫ້ກັປປພິນທຸແລ້ວ ກຣານກຖິນ ໃນມື້ນັ້ນບາດດຽວ. ຖ້າກຖິນນັ້ນຍັງບໍ່ທັນໄດ້ກຣານ, ຜູ້ອື່ນນຳຜ້າກຖິນມາ; ແລະຖວາຍຜ້າ ອານິສົງສ໌ກຖິນອື່ນໆ ເປັນອັນມາກ, ຜູ້ໃດຖວາຍອານິສົງສ໌ຫຼາຍ, ຄວຣກຣານດ້ວຍຜ້າກຖິນ ຂອງຜູ້ນັ້ນຖ້ອນ. ແຕ່ຕ້ອງຊີ້ແຈງໃຫ້ທາຍົກອີກຝ່າຍນຶ່ງຍິນຍອມ.

# ວ່າດ້ວຍຜູ້ຄວຣກຣານ

ກໍກຖິນ ໃຜຄວຣກຣານ?

ສົງຄ໌ໃຫ້ຈີວຣກຖິນແກ່ພິກຂຸໃດ, ພິກຂຸນັ້ນຄວຣກຣານ.

ກໍສົງຄ໌ຄວຣໃຫ້ໃຜເລົ່າ?

ພິກຂຸໃດມີຈີວຣເກົ່າ ຄວຣໃຫ້ແກ່ພິກຂຸນັ້ນ. ຖ້າພິກຂຸມີຈີວຣເກົ່າຫລາຍອົງຄ໌ຄວຣໃຫ້ແກ່ຜູ້ເຖົ້າ. ໃນຫມູ່ຜູ້ເຖົ້າເລົ່າ ພິກຂຸໃດເປັນມຫາບຸຣຸຜສາມາຖທຳຈີວຣເສຣັຈທັນກຣານໃນມື້ນັ້ນ, ຄວຣໃຫ້ແກ່ພິກຂຸນັ້ນ ຖ້າຜູ້ເຖົ້າບໍ່ສາມາຖ; ພິກຂຸຜູ້ອ່ອນກວ່າສາມາຖ ຄວຣໃຫ້ແກ່ທ່ານ. ແຕ່ສົງຄ໌ຄວຣທຳຄວາມສົງເຄາະຫ໌ແກ່ພຣະມຫາເຖຣະ, ເພາະສະນັ້ນ ສົງຄ໌ຄວຣຮຽນທ່ານວ່າ ຂໍທ່ານຈົງຮັບຖ້ອນ, ພວກຂ້າພເຈົ້າຈັກຊ່ວຍທຳຖວາຍ. ໃນໄຕຣຈີວຣຜືນໃດເປື່ອຍ, ຄວຣໃຫ້ເພື່ອປະໂຍຊນ໌ແກ່ຜືນນັ້ນ. ຕາມປົກຕິພຣະມຫາເຖຣະຄຣອງຈີວຣສອງຊັ້ນ ຄວຣໃຫ້ເພື່ອພໍເຮັດໄດ້ສອງຊັ້ນ. ຖ້າແມ້ທ່ານຄຣອງຈີວຣຊັ້ນດຽວແຕ່ເນື້ອແໜ້ນ, ແຕ່ຜ້າກຖິນເນື້ອບາງ ຄວຣໃຫ້ໃຫ້ພໍສອງຊັ້ນບາດດຽວເພື່ອຈະໄດ້ເຫມາະສົມຊົງ. ເຖິງແມ້ທ່ານເວົ້າຢູ່ວ່າ ເມື່ອບໍ່ໄດ້ເຮົາກໍຈະຄຣອງຊັ້ນດຽວ ກໍຄວຣໃຫ້ສອງຊັ້ນ, ແຕ່ຖ້າພິກຂຸໃດເປັນຜູ້ມີປົກຕິໂລພ ບໍ່ຄວຣໃຫ້ແກ່ພິກຂຸນັ້ນ.

ທ່ານຜູ້ຮັບນັ້ນເລົ່າ ກໍບໍ່ຄວຣຮັບດ້ວຍຄຶດວ່າ ເຮົາກຣານກຖິນແລ້ວ ພາຍຫລັງຈັກເລາະອອກທຳເປັນຈີວຣສອງຜືນ.

# ວ່າດ້ວຍກຖິນວັຕຣ໌

ກໍແລ ເພື່ອຈະສແດງວິສີທີ່ຈະຄວຣໃຫ້ແກ່ພິກຂຸທີ່ສົງຄ໌ຈະໃຫ້ ພຣະຜູ້ມີພຣະກາຄເຈົ້າຊົງປັຕຖນາວ່າ ພິກຂຸທັ້ງຫລາຍ ກໍແລ ກຖິນອັນພິກຂຸຄວຣກຣານຢ່າງນີ້ດັ່ງນີ້ແລ້ວ ຈຶ່ງຕຣັສກັມມະວາຈາສຳຫຼັບໃຫ້ກ່ອນ ມີຄຳວ່າ ***ສຸຕາຕຸ ເມ ກນຸເຕ*** ເປັນຕົ້ນ.

ກໍເມື່ອກຖິນອັນສົງຄ໌ໃຫ້ຢ່າງນີ້ແລ້ວ ຫາກຜ້າກຖິນນັ້ນເປັນຂອງມີບໍຣິກັມມ໌ເສຣັຈສັພພ໌ແລ້ວ ຢ່າງນັ້ນນັ່ນເປັນການດີ. ຫາກມີບໍຣິກັມມ໌ຍັງບໍ່ສຳເຣັຈ ແມ້ພິກຂຸອົງຄ໌ນຶ່ງຈະບໍ່ຊ່ວຍເຮັດດ້ວຍຖືຕົວວ່າ ເຮົາເປັນເຖຣະ ຫຼືວ່າ ເຮົາເປັນພຫຸສສຸຕະ ດັ່ງນີ້ບໍ່ໄດ້ ການຊັກຍິບແລະຍ້ອມ ພິກຂຸທັ້ງໝົດຕ້ອງປະຊຸມຊ່ວຍກັນໃຫ້ສຳເຣັຈ ກໍຂໍ້ນີ້ ຊື່ກຖິນວັຕຣ໌ທີ່ພຣະພຸທສເຈົ້າຊົງສັຣເສີນ.

ຈິງຢູ່ ພຣະຜູ້ມີພຣະກາຄເຈົ້າຊົງພຣະນາມວ່າ<u>ປທຸມຸຕຕຣະ</u> ກໍໄດ້ຊົງທຳກຖິນວັຕຣ໌ມາແລ້ວ ໃນອດີຕກາລ. ໄດ້ຍິນວ່າ ພຣະອັຄຣສາວົກຂອງພຣະອົງຄ໌ຊື່ສຸຊາຕເຖຣະ ໄດ້ຮັບກຖິນ. ພຣະສາສດາໄດ້ຊົງນັ່ງທຳກຖິນວັຕຣ໌ນັ້ນ ພ້ອມດ້ວຍພິກຂຸຫົກລ້ານແປດແສນອົງຄ໌.

# ວິສີກຣານ

ອັນພິກຂຸຜູ້ກຣານ ຄວຣຖືເອົາຜ້າກຖິນທີ່ທຳເສຣັຈສັພພ໌ແລ້ວກຣານກຖິນ ຕາມວິສີທ່ານກ່າວໄວ້ໃນຄັມພີຣ໌ບໍຣິວາຣ[๑] ມີຄຳເປັນຕົ້ນວ່າ ຖ້າປະສົງຄ໌ຈະກຣານກຖິນດ້ວຍສັງຄາຕິ ຄວຣຖອນສັງຄາຕິເກົ່າ ອສິຖານສັງຄາຕິໃຫມ່ ຄວຣລັ່ນວາຈາວ່າ ຂ້າພເຈົ້າກຣານກຖິນ ດ້ວຍສັງຄາຕິນີ້ ກໍແລ ເມື່ອກຣານແລ້ວ ຄວຣໃຫ້ພິກຂຸທັ້ງຫລາຍອນຸໂມທນາ

ຕາມວິທີທີ່ທ່ານກ່າວໄວ້ໃນຄັມພີຣ໌ບໍຣິວາຣ໌ ມີຄຳເປັນອາທິຢ່າງນີ້ແລວ່າ ພິກຂຸຜູ້ກຣານກຖິນນັ້ນ ຄວຣເຂົ້າໄປຫາສົງຄ໌ກະທຳຜ້າອຸຕຣາສົງຄ໌ຂວຽງບ່າຂ້າງນຶ່ງ ປະຕົມມື ກ່າວຢ່າງນີ້ວ່າ ***ອຕຸຖຕໍ ການຸເຕ ສງຸສສຸສ ກຖິນໍ ສມຸນີໂກ ກຖິນຕຸຖາໂຮ ອນຸໂມທາຖ*** ທ່ານຂ້ານ້ອຍ ກຖິນຂອງສົງຄ໌ກຣານແລ້ວ ການກຣານກຖິນເປັນສັມມ໌ ຂໍທ່ານທັ້ງຫລາຍອນຸໂມທນາຖ້ອນ, ພິກຂຸຜູ້ອນຸໂມທນາເຫຼົ່ານີ້ ຄວຣທຳຜ້າອຸຕຣາສົງຄ໌ຂວຽງບ່າຂ້າງນຶ່ງ ປະຕົມມືກ່າວຢ່າງນີ້ວ່າ ຜູ້ມີອາຍຸກຖິນຂອງສົງຄ໌ກຣານແລ້ວ ການກຣານກຖິນເປັນສັມມ໌ ເຮົາອນຸໂມທນາ; ຝ່າຍພວກພິກຂຸນອກນີ້ ຄວຣອນຸໂມທນາກຖິນເປັນພິກຂຸທຸກໆ ອົງຄ໌ກຣານແລ້ວ ດ້ວຍປະການີ້.

ແທ້ຈິງ ໃນຄັມພີຣ໌ບໍຣິວາຣ໌ ທ່ານກ່າວວ່າ ກຖິນເປັນອັນບຸຄຄົລສອງຝ່າຍ ຄື ຜູ້ກຣານນຶ່ງ ຜູ້ອນຸໂມທນານຶ່ງ ກຣານແລ້ວ. ທັ້ງໄດ້ກ່າວໄວ້ອີກວ່າ ສົງຄ໌ຫາໄດ້ກຣານກຖິນບໍ່ ຄຕະຫາໄດ້ກຣານກຖິນບໍ່ ບຸຄຄົລກຣານກຖິນ; ແຕ່ພຣະສົງຄ໌ອນຸໂມທນາ ເພາະຄຕະອນຸໂມທນາ ເພາະບຸຄຄົລກຣານ ກຖິນໄດ້ຊື່ວ່າ ສົງຄ໌ໄດ້ກຣານ ຄຕະໄດ້ກຣານ ບຸຄຄົລໄດ້ກຣານ.

ກໍເມື່ອກຖິນກຣານແລ້ວຢ່າງນັ້ນ ຖ້າແມ້ວ່າ ພວກທາຍົກຖວາຍອານິສົງສ໌ທີ່ນຳມາພ້ອມກັບກຖິນຈີວຣວ່າ ພິກຂຸອົງຄ໌ໃດໄດ້ຮັບຜ້າກຖິນຂອງພວກຂ້າພເຈົ້າ ພວກຂ້າພເຈົ້າຖວາຍແກ່ພິກຂຸອົງຄ໌ນັ້ນ ດັ່ງນີ້ ພິກຂຸສົງຄ໌ບໍ່ເປັນໃຫລ່. ຖ້າເຂົາບໍ່ທັນໄດ້ສັ່ງເສັຽໄວ້ ຖວາຍແລ້ວກໍໄປ ພິກຂຸສົງຄ໌ເປັນໃຫລ່; ເພາະເຫຕຸນັ້ນ ຖ້າແມ້ຈີວຣທີ່ເຫລືອ

ທັ້ງຫລາຍ ຂອງພິກຂຸຜູ້ກຣານເປັນຂອງຊຳຣຸດ ສົງຄ໌ຄວຣ**ອປໂລກນ໌**[10]ໃຫ້ຜ້າເພື່ອປະໂຍຊນ໌ແກ່ຈີວຣ ແມ້ເຫຼົ່ານັ້ນ. ສ່ວນກັມມະວາຈາຄົງໃຊ້ໄດ້ເທື່ອດຽວເທົ່ານັ້ນ. ຜ້າອານິສົງສ໌ກຖິນທີ່ຍັງເຫລືອ ຄວຣແຈກກັນໂດຍລຳດັບແຫ່ງຜ້າຈຳນຳພັຣษາ. ເພາະບໍ່ມີລຳດັບ ຄວຣແຈກຕັ້ງແຕ່ເຖຣອາສນ໌ລົງມາ. ຄຣຸກັຕຑ໌ບໍ່ຄວຣແຈກ. ແຕ່ຖ້າໃນສີມາດຽວມີຫລາຍວິຫາຣ ຕ້ອງໃຫ້ພິກຂຸທັ້ງປວງປະຊຸມກຣານກຖິນໃນທີ່ດຽວກັນ; ຈະກຣານກັນເປັນຜແນກໆ ບໍ່ຄວຣ.

# ອນັຕຖຕາກາຣແລະອັຕຖຕາກາຣ

ກໍບັດນີ້ ເພື່ອຈະສແດງວິທີທີ່ກຖິນຈະເປັນອັນກຣານ ແລະບໍ່ເປັນອັນກຣານໂດຍພິສດາຣ ພຣະຜູ້ມີພຣະພາຄເຈົ້າຈຶ່ງຕຣັສວ່າ ພິກຂຸທັ້ງຫລາຍ ກໍແລກຖິນເປັນອັນ ກຣານແລ້ວດ້ວຍຢ່າງນີ້ ບໍ່ເປັນອັນກຣານແລ້ວດ້ວຍຢ່າງນີ້ ເມື່ອຈະຊົງສແດງອກໍຣຕິຍກິຈ ມຫາພູມິກະແລະອນັຕຖຕລັກຂຕະກ່ອນ ຈຶ່ງຊົງສແດງອາກາຣ ໒໔ ມີຄຳວ່າ ***ອຸລຸລິຂິຕມຕ຺ເຕນ*** ເປັນຕົ້ນ.

ຕໍ່ຈາກນັ້ນໄປ ເມື່ອຈະຊົງສແດງອັຕຖຕລັກຂຕະ ຈຶ່ງຊົງສແດງອາກາຣ ໑໗ ມີຄຳວ່າ ***ອຫເຕນ ອຕ຺ຖຕໍ*** ເປັນອາທິ. ຈິງຢູ່ ແມ້ໃນຄັມພີຣ໌ບໍຣິວາຣ ທ່ານກໍໄດ້ກ່າວລັກษຕະຢ່າງນີ້ເຫມືອນກັນວ່າ ກຖິນບໍ່ເປັນອັນກຣານດ້ວຍອາກາຣ ໒໔ ກຖິນເປັນອັນກຣານດ້ວຍອາກາຣ ໑໗.

ບັຣດາບົທເຫຼົ່ານັ້ນ ບົທວ່າ ***ອຸລຸລິຂິຕມຕ຺ເຕນ*** ໄດ້ແກ່ ດ້ວຍສັກວ່າກະປະມາຕດ້ານຍາວແລະດ້ານກວ້າງ. ຈິງຢູ່ ເມື່ອຈະກະປະມາຕ ຍ່ອມໃຊ້ເລັບເປັນຕົ້ນກຣີດ ສແດງທີ່ກຳຫນົດ

---

[10] **ອປໂລກນ໌** [ອະປະໂຫຼກ, ອຸປະໂຫຼກ, ອຸບປະໂຫຼກ] ກ. ຍົກກັນຂຶ້ນໄປ ເຊັ່ນ ອຸປໂລກນ໌ໃຫ້ເປັນຫົວຫນ້າ. (ປ. ອປໂລກນ)

ຕັດອັນນັ້ນ ຫຼືທີ່ຫນ້າຜາກເປັນຕົ້ນເພື່ອຈຳປະເທສນັ້ນໆ ເພາະເຫຕຸນັ້ນ ການກະປະມາຕນັ້ນ ພຣະຜູ້ມີພຣະກາຄເຈົ້າຈຶ່ງຕຣັສວ່າ ສັກວ່າຍົກຂຶ້ນຈົດ.

ບົທວ່າ ***ໂຣວນມຕ຺ເຕນ*** ຄື ດ້ວຍສັກວ່າຊັກຜ້າກຖິນ.

ບົທວ່າ ***ຈີວຣວິຈາຣຕນມຕ຺ເຕນ*** ຄື ດ້ວຍສັກວ່າກະຢ່າງນີ້ວ່າ ຈັງເປັນຈີວຣ ໕ ຂັຕຑ໌ ຫຼືວ່າຈັງເປັນຈີວຣ ໗ ຂັຕຑ໌ ຫຼືວ່າຈັງເປັນຈີວຣ ໙ ຂັຕຑ໌ ຫຼືວ່າຈັງເປັນຈີວຣ ໑໑ ຂັຕຑ໌.

ບົທວ່າ ***ເຉທນມຕ຺ເຕນ*** ຄື ດ້ວຍສັກວ່າຕັດຜ້າຕາມທີ່ກະໄວ້ແລ້ວ.

ບົທວ່າ ***ພນ຺ຣນມຕ຺ເຕນ*** ຄື ດ້ວຍສັກວ່າເນົາດ້ວຍດ້າຍເນົາ.

ບົທວ່າ ***ໂອວຏ຺ຏິຍກຣຕນມຕ຺ເຕນ*** ຄື ດ້ວຍສັກວ່າຍົບຕາມຍາວຕາມແນວດ້າຍທີ່ເນົາ.

ບົທວ່າ ***ກຕ຺ຑູສກຣຕນມຕ຺ເຕນ*** ຄື ດ້ວຍສັກວ່າຕິດຫ່ວງຜ້າ.

ບົທວ່າ ***ທຬ຺ຫີກມ຺ມກຣຕນມຕ຺ເຕນ*** ຄື ດ້ວຍສັກວ່າຍົບຜ້າດາມສອງຜືນຕິດປະກັນເຂົ້າ.

ອີກຢ່າງນຶ່ງ ມີຄວາມວ່າ ດ້ວຍສັກວ່າຍົບຜ້າກຖິນ ເຮັດໃຫ້ເປັນຜ້າດາມຫ້ອງແຫ່ງຜ້າດາມຜືນທຳອິດທີ່ເຊື່ອມຕິດໄວ້ແລ້ວ ດັ່ງນີ້ກໍມີ.

ໃນມຫາປັຈຈຣີກ່າວວ່າ ດ້ວຍຕິດຜ້າຮອງຈີວຣປົກຕິ. ສ່ວນໃນກຸຣຸນທີກ່າວວ່າ ດ້ວຍສັກວ່າເຊື່ອມຜ້າດາມຫ້ອງເຂົ້າ ເພື່ອທຳຈີວຣທີ່ຍົບ ໄວ້ຊັ້ນດຽວຕາມປົກຕິໃຫ້ເປັນສອງຊັ້ນ.

ບົທວ່າ ***ອນຸວາຕກຣຕນມຕ຺ເຕນ*** ຄື ດ້ວຍສັກວ່າຕິດອນຸວາຕດ້ານຍາວ.

ບົທວ່າ ***ປຣິກຕ຺ຑກຣຕນມຕ຺ເຕນ*** ຄື ດ້ວຍສັກວ່າຕິດອນຸວາຕດ້ານກວ້າງ.

ບົທວ່າ ***ໂອວຏ຺ເຜຍ຺ຍກຣຕນມຕ຺ເຕນ ຄື*** ດ້ວຍສັກວ່າເພີ່ມຜ້າດາມເຂົ້າ.

ອີກຢ່າງນຶ່ງ ດ້ວຍສັກວ່າຖືເອົາຜ້າຈາກຈີວຣກຖິນ ຕິດເຂົ້າທີ່ຜ້າຈີວຣກຖິນຜືນອື່ນ.

ບົທວ່າ ***ກມ຺ພລມທ຺ທນມຕ຺ເຕນ*** ຄື ດ້ວຍຈີວຣທີ່ໃສ່ລົງໃນນ້ຳຍ້ອມພຽງເທື່ອດຽວ ມີສີດັ່ງງາຊ້າງ ຫຼືມີສີດັ່ງໃບໄມ້ເຫລືອງ. ແຕ່ຖ້າແມ້ຍ້ອມເທື່ອດຽວຫຼືສອງເທື່ອ ກໍໄດ້ສີ ໃຊ້ໄດ້.

ບົທວ່າ ***ນິມິຕຸຕກເຕນ*** ຄື ດ້ວຍຜ້າທີ່ກິກຂຸທຳນິມິຕຢ່າງນີ້ວ່າ ເຮົາຈັກກຣານກຖິນດ້ວຍຜ້ານີ້. ຈິງຢູ່ ໃນຄັມກີຣ໌ບໍຣິວາຣທ່ານກ່າວໄວ້ພຽງເທົ່ານີ້ ແຕ່ໃນອັຖກຖາທັງຫລາຍກ່າວວ່າ ດ້ວຍຜ້າທີ່ກິກຂຸທຳນິມິຕໄດ້ມາຢ່າງນີ້ວ່າ ຜ້ານີ້ດີ ອາຈກຣານກຖິນດ້ວຍຜ້ານີ້ໄດ້.

ບົທວ່າ ***ປຣິກຖາກເຕນ*** ຄື ດ້ວຍຜ້າທີ່ກິກຂຸໃຫ້ເກີດຂຶ້ນດ້ວຍເວົ້າລຽບຄຽງຢ່າງນີ້ວ່າ ການຖວາຍຜ້າກຖິນ ສົມຄວຣຢູ່ ທາຍົກເຈົ້າຂອງກຖິນຍ່ອມໄດ້ບຸລຫຼາຍ ຂຶ້ນຊື່ວ່າ ຜ້າກຖິນ ເປັນຂອງບໍຣິສຸທຣິ໌ແທ້ໆ ຈຶ່ງຈະສົມຄວຣ ແມ້ມາຣດາຂອງຕົນ ກໍບໍ່ຄວຣອອກປາກຂໍ ຕ້ອງເປັນດັ່ງຜ້າທີ່ລອຍມາຈາກອາກາສນັ້ນແລ ຈຶ່ງຈະເໝາະ.

ບົທວ່າ ***ກຸກຸກເຕນ*** ຄື ດ້ວຍຜ້າທີ່ຢືມມາ.

ໃນບົທວ່າ ***ສນຸນິຣິກເຕນ*** ນີ້ ສັນນິຣິນິ ໔ ຢ່າງ ຄືກຣຕສັນນິຣິ ໑ ນິຈຍສັນນິຣິ ໑. ໃນສັນນິຣິ ໔ ຢ່າງນັ້ນ ການເກັບໄວ້ເຮັດ ບໍ່ເຮັດເສັ່ງໃຫ້ເສຣັຈໃນມື້ນັ້ນບາດດຽວຊື່ກຣຕສັນນິຣິ. ສົງຄ໌ໄດ້ຜ້າກຖິນໃນວັນນີ້ ແຕ່ຖວາຍໃນມື້ຕໍ່ມາ ນີ້ຊື່ນິຈຍສັນນິຣິ.

ບົທວ່າ ***ນິສຸສຄຸຄິເຍນ*** ຄື ດ້ວຍຜ້າທີ່ຂ້າມຣາຕຣີ.

ແມ້ໃນຄັມກີຣ໌ບໍຣິວາຣ ທ່ານກໍກ່າວວ່າ ຜ້າທີ່ກິກຂຸກຳລັງທຳຢູ່ ອຣຸຕຂຶ້ນມາຊື່ຜ້ານິສສັຄຄີຍ໌.

ບົທວ່າ ***ອກປຸປກເຕນ*** ຄື ດ້ວຍຜ້າທີ່ບໍ່ໄດ້ເຮັດກັປປພິນທຸ.

ໃນຂໍ້ວ່າ ***ອຄຸຄຕຸຣ ສງຸຄາຜິຍາ*** ເປັນຕົ້ນ ມີຄວາມວ່າ ກຖິນທີ່ກຣານດ້ວຍຜ້າລາດເປັນຕົ້ນ ຊຶ່ງເປັນຜ້າອື່ນ ນອກຈາກຜ້າສັງຄາຜິ ຜ້າອຸຕຣາສົງຄ໌ແລະຜ້າອັນຕຣວາສົກ ບໍ່ເປັນອັນກຣານ.

ຂໍ້ວ່າ ***ອຄຸຄຕຸຣ ປຄຸຈຜານ ວາ ອຕິເຣກປຄຸຈຜານ ວາ*** ມີຄວາມວ່າ ກຖິນທີ່ກຣານດ້ວຍຜ້າທີ່ທຳເປັນ **໕ ຂັຕຫ໌**[11] ຫຼືເກີນກວ່າ ໕ ຂັຕຫ໌ ສແດງມຫາມົຕຫົລແລະອັທຸຒມົຕຫົລເທົ່ານັ້ນຈຶ່ງໃຊ້ໄດ້. ດ້ວຍວ່າ ເມື່ອທຳຢ່າງນັ້ນ ຈີວຣເປັນອັນເຮັດໄດ້ມົຕຫົລ ເວັ້ນຈີວຣນັ້ນເສັຽ ກຖິນທີ່ກຣານດ້ວຍຜ້າອື່ນທີ່ບໍ່ໄດ້ຕັດ ຫຼືດ້ວຍຜ້າທີ່ມີຂັຕຫ໌ ໔ ມີຂັຕຫ໌ ໓ ມີຂັຕຫ໌ ໔ ໃຊ້ບໍ່ໄດ້.

ຂໍ້ວ່າ ***ອຄຸຄຕຸຣ ປຸຄຸຄລສຸສ ອຕຸຖາຣາ*** ມີຄວາມວ່າ ກຖິນ ບໍ່ເປັນອັນກຣານ ດ້ວຍການກຣານຂອງສົງຄ໌ ຫຼືຂອງຄຕະອື່ນ ເພາະເວັ້ນການກຣານຂອງບຸຄຄົລເສັຽ.

ຂໍ້ວ່າ ***ນິສຸສີມຜຸໂກ ອນຸໂມທຕິ*** ມີຄວາມວ່າ ພິກຂຸຜູ້ຢູ່ພາຍນອກອຸປຈາຣສີມາ ອນຸໂມທນາ.

ບົທວ່າ ***ອທຕເຕນ*** ຄື ດ້ວຍຜ້າທີ່ຍັງບໍ່ໄດ້ໃຊ້.

ບົທວ່າ ***ອທຕກປຸເປນ*** ຄືດ້ວຍຜ້າຫຼຽນໃໝ່ ຄືທີ່ຊັກແລ້ວເທື່ອດຽວຫຼື ໔ ເທື່ອ.

ບົທວ່າ ***ປີໂລຕິກາຍ*** ຄື ດ້ວຍຜ້າເກົ່າ.

ບົທວ່າ ***ປັສຸກູເລນ*** ຄື ດ້ວຍຜ້າບັງສຸກຸລທີ່ເກີດໃນເຂຕ ໔໓.

ໃນກຸຣຸນທີແລະມຫາປັຈຈຣີ ແກ້ວ່າ ໄດ້ແກ່ ດ້ວຍຈີວຣທີ່ພິກຂຸຜູ້ຖືບັງສຸກຸລເຮັດດ້ວຍຜ້າທີ່ຕົນທ່ຽວຂໍໄດ້ມາ.

ບົທວ່າ ***ອາປຕິເກນ*** ມີຄວາມວ່າ ທາຍົກເກັບຜ້າເກົ່າທີ່ຕົກຕາມປະຕູຮ້ານຕລາດ ຖວາຍເພື່ອປະໂຍຊນ໌ແກ່ກຖິນ ກຖິນທີ່ກຣານແລ້ວແມ້ດ້ວຍຜ້ານັ້ນຍ່ອມໃຊ້ໄດ້.

ບົທທີ່ເຫລືອຄວຣຮູ້ໂດຍຄວາມແຜກຈາກທີ່ກ່າວແລ້ວ. ແຕ່ໃນທີນີ້ໃນອັຖກຖາມາກຫລາຍໄດ້ກ່າວຄຳເປັນຕົ້ນວ່າ ສົມນ໌ເທົ່າໃດຍ່ອມເກີດພ້ອມກັບການກຣານກຖິນ ຄຳນັ້ນທັ້ງ

---

[11] **ຂັຕຫ໌ທັ້ງ ໕** ນີ້ ແຕ່ລະຂັຕຫ໌ມີສ່ວນປະກອບຄົບໃນຕົວ ຄື ມີ ໔ ກະທົງ ໄດ້ແກ່ ກະທົງໃຫລ່ ເອີ້ນວ່າ ມົຕຫົລ ກັບກະທົງນ້ອຍ (ປະມາຕຂອງກະທງງໃຫລ່) ເອີ້ນວ່າ ອັທຸຒມົຕຫົລ.

ໜົດ ພຣະສັມມະສັງຄາຫກາຈາຣຍ໌ທັ້ງຫລາຍໄດ້ຍົກຂຶ້ນສູ່ບາລີໃນຄັມພີຣ໌ບໍຣິວາຣໄວ້ແລ້ວແລ ເພາະສະນັ້ນ ຄວຣຮູ້ຕາມນັຍທີ່ມາແລ້ວໃນຄັມພີຣ໌ບໍຣິວາຣນັ້ນຖ້ອນ. ເພາະວ່າຂໍ້ຄວາມໃດໆ ແຫ່ງກາຣກຣານກຖິນຈະເສັ່ງຫາຍໄປ ເພາະບໍ່ກ່າວຄຳນັ້ນໄວ້ໃນທີ່ນີ້ກໍຫາບໍ່ໄດ້.

# ວ່າດ້ວຍກາຣຮື້ກຖິນ[12]

ພຣະຜູ້ມີພຣະພາຄເຈົ້າ ເມື່ອຊົງສແດງກາຣກຣານກຖິນຢ່າງນີ້ແລ້ວ ບັດນີ້ ຈະຊົງສແດງກາຣຮື້ຈຶ່ງຕຣັສຄຳວ່າ ***ກຖໍ ຈ ພິກຂເວ ອຸພຸກຕໍ ໂຫຕິ ກຖິນໍ*** ເປັນຕົ້ນ ແປລວ່າ ພິກຂຸທັ້ງຫລາຍ ກໍກຖິນຈະເປັນອັນຮື້ແນວໃດ?

ວິນິຈສັຍໃນຄຳນັ້ນ ຄວຣຮູ້ດັ່ງນີ້ :-

ມາຕິກາ ນັ້ນໄດ້ແກ່ ຫົວຂໍ້. ອະທິບາຍວ່າ ແມ່ບົທ.

ຈິງຢູ່ ຫົວຂໍ້ ຖ ນັ້ນ ຍັງກາຣຮື້ກຖິນໃຫ້ເກີດ.

ໃນມາຕິກາເຫຼົ່ານັ້ນ ທີ່ຊື່ວ່າ ປັກກມນັນຕິກາ ເພາະມີຄວາມຫລີກໄປເປັນທີ່ສຸດ. ເຖິງມາຕິກາທີ່ເຫລືອ ກໍຄວຣຮູ້ຢ່າງນີ້.

ບົທວ່າ ***ນ ປຈຸຈເສຸສໍ*** ມີຄວາມວ່າ ເຮົາຈັກບໍ່ມາອີກ.

ກໍໃນກາຣຮື້ກຖິນມີກາຣຫລີກໄປເປັນທີ່ສຸດນີ້ ຈີວຣປລິໂພສຂາດກ່ອນ ອາວາສ ປລິໂພສຂາດທີຫລັງ. ຈິງຢູ່ ເມື່ອພິກຂຸຫລີກໄປເສັ່ງຢ່າງນັ້ນ ຈີວຣປລິໂພສຍ່ອມຂາດໃນ ພາຍໃນສີມາບາດດຽວ, ອາວາສປລິໂພສີ ຂາດໃນເມື່ອລ່ວງສີມາໄປ.

ອັນທີ່ຈິງ ເຖິງ ໃນຄັມພີຣ໌ບໍຣິວາຣ ທ່ານກໍກ່າວວ່າ :-

ກາຣຮື້ກຖິນ ມີກາຣຫລີກໄປເປັນທີ່ສຸດ

---

[12] **ກຖິນຸທຸສາຣ** ກາຣເດາະກຖິນ ກໍເອີ້ນກັນ

ພຣະສຸຄົຕເຈົ້າຜູ້ເປັນເຜົ່າພຣະອາທິຕຍ໌ຕຣັສໄວ້ແລ້ວ,
ເມື່ອກິກຂຸຫລີກໄປດ້ວຍຄຶດວ່າ ເຮົາຈັກຖິ້ມອາວາສ
ນີ້ເສັ່ງລະ ດັ່ງນີ້ ຈີວຣປລິໂພຂຂາດກ່ອນ ອາວາສ
ປລິໂພຂຂາດທີຫລັງ.

ສອງບົທວ່າ ***ຈີວຣໍ ອາທາຍ*** ມີຄວາມວ່າ ຖືເອົາຈີວຣທີ່ຍັງບໍ່ເຮັດ (ຫລີກໄປ)

ບົທວ່າ ***ພຫິສີມາຄຕສຸສ*** ມີຄວາມວ່າ ໄປສູ່ວັດອື່ນທີ່ໃກ້ຄຽງ.

ສອງບົທວ່າ ***ເອວໍ ໂຫຕິ*** ມີຄວາມວ່າ ຄວາມຄຶດເຖິງຢ່າງນັ້ນຍ່ອມມີເພາະໄດ້ເຫັນເສນາສນະທີ່ຜາສຸກ ຫຼືສຫາຍສົມບັຕິໃນວັດນັ້ນ.

ສ່ວນການຮື້ກຖິນມີຄວາມເສຣັຈເປັນທີ່ສຸດນີ້ ອາວາສປລິໂພຂຂາດກ່ອນ.

ຈິງຢູ່ ອາວາສປລິໂພຂນັ້ນ ຍ່ອມຂາດ ໃນເມື່ອສັກວ່າເກີດຄວາມຄຶດໃນຈິຕຂຶ້ນວ່າເຮົາຈັກບໍ່ກລັບມາລະ ເທົ່ານັ້ນ.

ອັນທີ່ຈິງ ເຖິງໃນຄັມພີຣ໌ບໍຣິວາຣ ທ່ານກໍກ່າວວ່າ :-

ການຮື້ກຖິນມີຄວາມເສຣັຈເປັນທີ່ສຸດ
ພຣະສຸຄົຕເຈົ້າຜູ້ເປັນເຜົ່າພຣະອາທິຕຍ໌ຕຣັສໄວ້ແລ້ວ.
ເມື່ອກິກຂຸຫລີກໄປດ້ວຍຄຶດວ່າ ເຮົາຈັກຖິ້ມອາວາສ
ນີ້ເສັ່ງລະ ດັ່ງນີ້ ອາວາສປລິໂພຂຂາດກ່ອນ
ຈີວຣປລິໂພຂຂາດຕໍ່ເມື່ອຈີວຣເສຣັຈແລ້ວ.

ແມ້ໃນການແຈກມາຕິກາທີ່ເຫລືອ ຄວຣຮູ້ເນື້ອຄວາມໂດຍນັຍນີ້ ແຕ່ໃນມາຕິກາທີ່ເຫລືອມີແປລກກັນດັ່ງນີ້ :-

ໃນການຮື້ກຖິນມີຄວາມຕົກລົງໃຈເປັນທີ່ສຸດ ປລິໂພສິທັ້ງສອງຍ່ອມຂາດພ້ອມກັນ ໃນເມື່ອ**ມາຕຣ**[13]ວ່າຄວາມຄຶດເກີດຂຶ້ນວ່າ ເຮົາຈັກບໍ່ໃຫ້ທຳຈີວຣນີ້ລະ ເຮົາຈັກບໍ່ກລັບມາລະ ດັ່ງນີ້ບາດດຽວ.

ແທ້ຈິງ (ໃນຄັມພີຣ໌ບໍຣິວາຣ) ທ່ານກໍກ່າວໄວ້ວ່າ :-

ການຮື້ກຖິນມີຄວາມຕົກລົງໃຈເປັນທີ່ສຸດ
ພຣະສຸຄົຕເຈົ້າຜູ້ເປັນເຜົ່າພຣະອາທິຕຍ໌ຕຣັສໄວ້ແລ້ວ,
ເມື່ອພິກຂຸຫລີກໄປດ້ວຍ ຄຶດວ່າ ເຮົາຈັກຖິ້ມອາວາສ
ນີ້ເສັຽລະ ດັ່ງນີ້ ປລິໂພສທັ້ງສອງຂາດບໍ່ກ່ອນ
ບໍ່ຫລັງກັນ.

ຄວາມຂາດປລິໂພສໃນການຮື້ກຖິນທັ້ງປວງ ຄວຣຮູ້ໂດຍນັຍຢ່າງນີ້ :-

ກໍແລ ຄວາມຂາດປລິໂພສິນັ້ນ ບັຓທິຕອາຈຮູ້ໄດ້ຕາມນັຍທີ່ກ່າວນີ້ແລະຕາມທີ່ມີມາໃນຄັມພີຣ໌ບໍຣິວາຣ, ເພາະສະນັ້ນ ຂ້າພເຈົ້າຈຶ່ງບໍ່ກ່າວໂດຍພິສດາຣ. ສ່ວນຄວາມສັງເຂປໃນກຖິນຸທສາຣ ໕ ມີ ນາສນນຸຕິກາ ເປັນຕົ້ນນີ້ ດັ່ງນີ້ :-

ໃນການຮື້ກຖິນທີ່ມີຄວາມເສັຽເປັນທີ່ສຸດ ອາວາສປລິໂພສຂາດກ່ອນ ເມື່ອຈີວຣເສັຽ ຈີວຣປລິໂພສຈຶ່ງຂາດ.

ທີ່ມີການຟັງເປັນທີ່ສຸດ ຈີວຣປລິໂພສຂາດກ່ອນ ອາວາສປລິໂພສິຂາດພ້ອມກັບການຟັງຂອງພິກຂຸນັ້ນ.

---

[13] **ມາຕຣ** [ມາດ, ມາດຕຸຣະ-] ນ. ເຄື່ອງສຳຫລັບວັດຂນາດ ຈຳນວນ ເວລາ ແລະມຸມ ເຊັ່ນ ມາຕຣນ້ຳ ມາຕຣໄຟຟ້າ, ມິເຕີຣ໌ກໍເອີ້ນກັນ. (ສ. ມາຕຸຣ; ປ. ມຕຸຕ).

ທີ່ມີຄວາມສິ້ນຫວັງເປັນທີ່ສຸດ ອາວາສປລິໂພສຂາດກ່ອນ, ຈີວຣປລິໂພສຂາດຕໍ່ເມື່ອສິ້ນຄວາມຫວັງຈະໄດ້ຈີວຣແລ້ວ.

ກໍການຮື້ກຖິນມີຄວາມສິ້ນຫວັງເປັນທີ່ສຸດນີ້ ມີຫລາຍປະເພທ ມີການສແດງຄລຸກຄລະກັນໄປກັບການຮື້ນອກຈາກນີ້ ໂດຍນັຍເປັນຕົ້ນວ່າ ພິກສຸຍ່ອມໄດ້ໃນທີ່ຊຶ່ງບໍ່ໄດ້ຫວັງ, ບໍ່ໄດ້ໃນທີ່ຊຶ່ງຫວັງ, ທ່ານມີຄວາມຄຶດເຖິງຢ່າງນີ້ວ່າ ເຮົາຈັກທຳຈີວຣນີ້ໃນທີ່ນີ້ລະ, ຈັກບໍ່ກລັບລະ ດັ່ງນີ້, ເພາະສະນັ້ນ ພຣະຜູ້ມີພຣະພາຄເຈົ້າຈຶ່ງຊົງແຍກຕຣັສໃຫ້ພິສດານຂ້າງໜ້າ, ບໍ່ຕຣັສໄວ້ໃນລຳດັບນີ້. ແຕ່ໄດ້ຕຣັສການຮື້ກຖິນມີຄວາມກ້າວລ່ວງສີມາເປັນທີ່ສຸດ ເປັນລຳດັບແຫ່ງການຮື້ກຖິນມີການຟັງເປັນທີ່ສຸດໃນລຳດັບນີ້.

ໃນການຮື້ກຖິນທີ່ມີຄວາມກ້າວລ່ວງສີມາເປັນທີ່ສຸດນັ້ນ ຈີວຣປລິໂພສຂາດກ່ອນ ອາວາສປລິໂພສຍ່ອມຂາດຕໍ່ພິກສຸນັ້ນຢູ່ນອກສີມາ.

ໃນການຮື້ກຖິນທີ່ມີການຮື້ພ້ອມກັນ ປລິໂພສ ໒ ຂາດບໍ່ກ່ອນບໍ່ຫລັງກັນ.

ພຣະຜູ້ມີພຣະພາຄເຈົ້າ ເມື່ອຊົງສແດງກຖິນຸທສາຣ ໆ ໃນອາທາຍວາຣຢ່າງນີ້ແລ້ວ, ຈຶ່ງຊົງສແດງກຖິນຸທສາຣ ໆ ເຫຼົ່ານັ້ນແລອີກແຫ່ງຈີວຣທີ່ພິກສຸທຳຄ້າງໄວ້ ໃນສມາທາຍວາຣກໍມີ ຕາມທີ່ເໝາະໃນອາທາຍສມາທາຍວາຣກໍມີ.

ເບື້ອງໜ້າແຕ່ນັ້ນ ພຣະຜູ້ມີພຣະພາຄເຈົ້າຊົງສແດງກຖິນຸທສາຣທັ້ງຫລາຍຊຶ່ງສົມດ້ວຍນັຍເປັນຕົ້ນວ່າອນຣິສຸກິເຕນ ຊຶ່ງພາດພິງເຖິງວິຣີວ່າ ເຮົາຈັກບໍ່ກລັບ ດັ່ງນີ້ເທົ່ານັ້ນ, ບໍ່ພາດເຖິງວິຣີນີ້ ເຮົາຈັກກລັບພາຍໃນສີມາ ເຮົາຈັກບໍ່ກລັບ ດັ່ງນີ້ເລີຍ.

ເບື້ອງໜ້າແຕ່ນັ້ນ ເມື່ອຊົງສແດງກຖິນຸທສາຣທີ່ມີຄວາມສິ້ນຫວັງເປັນທີ່ສຸດຫລາຍເທື່ອ ໂດຍນັຍອັນຄລຸກຄລະກັບກຖິນຸທສາຣນອກນີ້ ດ້ວຍນັຍເປັນຕົ້ນວ່າ ***ຈີວຣາສາຍ ປກ຺ກມຕິ*** ແລ້ວຊົງສແດງກຖິນຸທສາຣທັ້ງຫລາຍທີ່ສົມຄວຣໃນມາຕິກາມີ

***ນິພຸການຸຕິກາ*** ເປັນອາທິ ເນື່ອງດ້ວຍກິກຸຜູ້ໄປສູ່ທິສ ແລະເນື່ອງດ້ວຍກິກຸຜູ້ມີຄວາມຢູ່ຢ່າງພໍໃຈອີກ.

ເມື່ອຊົງສແດງກຖິນຸທຂາຣໂດຍປະເກທຢ່າງນີ້ແລ້ວ, ບັດນີ້ ຈະຊົງສແດງປລິໂພສຊຶ່ງເປັນປຝິປັກນ໌ແກ່ປລິໂພສທັ້ງຫລາຍ ທີ່ຕຣັສໄວ້ວ່າ :-

***ປລິໂພສ[14] ທັ້ງຫລາຍ ຍ່ອມຂາດດ້ວຍກຖິນຸທຂາຣນັ້ນໆ ດັ່ງນີ້ ຈຶ່ງຕຣັສຄຳວ່າ ກິກຸທັ້ງຫລາຍ ປລິໂພສແຫ່ງກຖິນມີອົງຄ໌ ໔ ເຫຼົ່ານີ້ ດັ່ງນີ້ ເປັນອາທິ.***

ບັຣດາບົທເຫຼົ່ານັ້ນ ບົທວ່າ ***ຈຕຸເຕນ*** ມີຄວາມວ່າ ອາວາສນັ້ນເປັນສຖານອັນກິກຸສລະແລ້ວ ດ້ວຍຄວາມສລະອັນໃດ, ຊື່ຄວາມສລະອັນນັ້ນ, ດ້ວຍຄວາມສລະນັ້ນ.

ແມ້ໃນຄວາມວາງແລະຄວາມປລ່ອຍກໍນັຍນີ້ແລ ຄຳທີ່ເຫລືອທຸກໆ ສຖານ ຕື້ນທັ້ງນັ້ນລະນີ້ແລ.

***ອັຖກຖາກຖິນຂັນສກະ ຈົບ.***



[14] **ປລິໂພສ** [ປະ-ລິ-ໂພດ] (ມຄ. ປລິໂພສ) ນ. ຄວາມຜູກພັນ, ຄວາມກັງວົລ, ຄວາມຫ່ວງໃຍ.

# ຣາຍນາມເຈົ້າພາບພິມພ໌ຫນັງສື

| ຊື່ | ຈຳນວນເງິນ - ດອລລາຣ໌ |
|---|---|
| ອາຈາຣຍ໌ໄພສູຣຍ໌, ຕຸ່ຍ ອິນທວົງສ໌ ແລະຄອບຄົວ | $ ໑໐໐.໐໐ |
| ກຸ່ມນັກສຶກສາສຖາບັນພລັງຈິຕຕານຸກາພ | $ ໓໙໙.໐໐ |
| ນາຍແພທຍ໌ຣັສຊັຍ, ແພທຍ໌ຫລີງຍຸພດີ ຣິທສາຫຣຕ໌ | $ ໑໐໐.໐໐ |
| ຄອບຄົວໂສກິດສຣີ | $ ໑໐໐.໐໐ |
| ຍາແປັດ | $ ໔໐.໐໐ |
| ຄຸຕຍາຍ ຝ່ອນ ມັ່ນ | $ ໑໐໐.໐໐ |
| ຄຸຕ ຫລ້າ ຄຸຕອ໊ອດ ວົງສ໌ປັຍລາ | $ ໑໐໐.໐໐ |
| ຄຸຕ Jane Sukonthorn (ນກ) | $ ໕໐.໐໐ |
| ຄຸຕ Wilai and Wirunchaya Suksen | $ ໔໐.໐໐ |
| ຄຸຕ Raveevan Meevasin | $ ໔໐.໐໐ |
| ຄຸຕ Supawadee Meevasin | $ ໔໐.໐໐ |
| ຄຸຕ Tipawan Meevasin | $ ໕໐.໐໐ |
| ຄຸຕ Ping and Maki Kumpanon | $ ໕໐.໐໐ |
| ຄຸຕ Pavinee Surapat | $ ໕໐.໐໐ |
| ຄຸຕ Tasana Rerasook | $ ໑໐໐.໐໐ |
| ຄຸຕ (ແວ່ນ) Natwansa Levesque Levesque | $ ໑໙.໐໐ |

ຄອບຄົວ ຈິ່ງສຸຈຣິຕໃຈ ........................................ $ ໕໐.໐໐

ຄອບຄົວພິນິຈສັກດິ໌ກຸລ ........................................ $ ໕໐.໐໐

Phan Family ........................................ $ ໕໐.໐໐

ຄຸຓ ມຕີ (ຫນູ) ພາຄພິເສษ ........................................ $ ໕໐.໐໐

ຄຸຓ ຣັຕນາ ກຣໂກษາ ........................................ $ ໑໐.໐໐

ຄຸຓ ຣິນ ........................................ $ ໑໐.໐໐

ຄຸຓ ນິດ ........................................ $ ໑໐.໐໐

ຄຸຓ ສຸພົພ ........................................ $ ໑໐.໐໐

ຄຸຓ ພັฒນາ ........................................ $ ໑໐.໐໐

ຄຸຓຣັຕນາ ກິຕຕິບັຣລຸ ........................................ $ ໑໐໐.໐໐

**ຄອບຄົວ ກິຈໄຊຍາ** * ສີຣິຣຕນ໌ * ວິຊຊາລ * ວິກຣົມ * ດວງກມົລ ........................................ $ ໑໐.໐໐

ຄຸຓເພັລ Supatarn Benjamin ........................................ $ ໘໐.໐໐

ຄຸຓ Ravee Van ........................................ $ ໔໐.໐໐

ຄຸຓ Supawadee ........................................ $ ໔໐.໐໐

ຄຸຓ Tipawan ........................................ $ ໕໐.໐໐

ແມ່ນ້ອຍ ຄຸຓ ຣັກວິກາລ ວັນພຣປະເສີຖ ແລະຄອບຄົວ ........................................ $ ໕໐.໐໐

ຄຸຓ ສົມສຣີ ກຸລວິฒິວິລາສ ........................................ $ ໕໐.໐໐

ຄຸຓ ສຸພັຕຣາ ນວມທອງ, ສຸເມຘ ຕິລລວົງษ໌ ........................................ $ ໕໐.໐໐

ຄຸຓ Nangkhinwin Yee ........................................ $ ໔໐.໐໐

ຄຸຓ ສົມພຣ Hasler .......... $ ໖໐.໐໐

ຄຸຓ ຊັງ Darin Zimmerman.......... $ ໖໐.໐໐

ຄຸຓ ແຊມ ຊົງພຣ ສັນຕະຄຸປຕ໌.......... $ ໖໐.໐໐

ຄຸຓ ສົມປັຕຖນາ ສຸພຸທສຍາງກູຣ..........$ ໕໐.໐໐

ຄຸຓ ກນກພຣ ຣິກບ໌ສຸຂ .......... $ ໖໐.໐໐

ຄຸຓ ຣັຕນາວດີ .......... $ ໖໐.໐໐

ຄຸຓ ກັຕຍຕີ ແມັກເດນ ..........$ ໑໐.໐໐

ຄຸຓ ມາລີ ລຸກາເກີຣ໌..........$ ໑໐.໐໐

ຄຸຓ ເບັລຊາ ເພລສັນ.......... $ ໖໐.໐໐

ຄຸຓ ຊລານຸຊ ແສນອຸບົລ ລີອີ່ ແລະຄອບຄົວ .......... $ ໖໐.໐໐

ຄຸຓ Wanphen Meintosh.......... $ ໖໐.໐໐

ຄຸຓ ພິມົລ Thompson..........$ ໑໐.໐໐

ຄຸຓ ສນທາ ອດິຊາ ສົມສັກດິ໌ ບຸລເສຣິມ ແລະຄອບຄົວ..........$ ໑໐.໐໐

ຄຸຓ ນ້ອງເລັກ (ຮ້ານອາຫາຣໄທຍຄູຊີນ) .......... $ ໓໐.໐໐

ຄຸຓ ລັດດາວັລຍ໌ ຣັຕນານຸກາພ ..........$ ໔໐.໐໐

ຄຸຓ M J..........$ ໔໐.໐໐

ຄຸຓ ຈຶ໊ບ ກຸປນີຍ໌ ສອງສີ + Roland Wang..........$ ໔໐.໐໐

ຄຸຓ kurt Eric Munroe..........$ ໑໐.໐໐

ຄຸຓ ເຂມິນທຣາ ມັນໂຣ ..........$ ໑໐.໐໐

ຄຸຓ ຣັຕນາວດີ ........................................ $ ໔໕.໐໐

ຄຸຓ Anintita Sivara, Dave Stein, & ສຸເມສ ຕັລລວົງບ໌ ........................................ $ ໕໐.໐໐

ຄຸຓ ວັນເພັລ ແມັກດິນທອຍ ........................................ $ ໔໐.໐໐

ຄຸຓ ນ້ອງເລັກ ........................................ $ ໗.໐໐

ຄຸຓ ປິຍະວັຣຕ ຟິລລິປສ໌ ........................................ $ ໗໐.໐໐

ຄຸຓ Malee Looker ........................................ $ ໑໐.໐໐

ຄຸຓ Shoke Chiu ........................................ $ ໑໐.໐໐

ຄຸຓ Khin Myint ........................................ $ ໑໐.໐໐

ຄຸຓ Yong Wong ........................................ $ ໑໐.໐໐

ຄຸຓ Mumu Tha ........................................ $ ໑໐.໐໐

ຄຸຓ ມາລີ ລຸ໊ຄເກີຣ໌ ........................................ $ ໑໐.໐໐

ຄຸຓ ວນິດາ ຄິວເອນ ........................................ $ ໑໐໐.໐໐

ຄຸຓ ທິສນາ ຣິກຊີສຸຂ ........................................ $ ໑໐໐.໐໐

ຄຸຓ ອລິສ ສຣັຕຍ໌ ........................................ $ ໑໐໐.໐໐

ຄຸຓ ແດງ ປະນົງດ໌ ........................................ $ ໑໐໐.໐໐

ຄຸຓ Mumu Tha ........................................ $ ໑໐.໐໐

ຄຸຓ ສຸນິສາ ເມົາເຈຣີ ........................................ $ ໕໐.໐໐

ຄຸຓ ຝອນ ມັນ ........................................ $ ໕໙.໐໐

ຄຸຓ ສວຣິສ ຝູຊັພຍ໌ນິຕັດຣ໌ ........................................ $ ໕໐.໐໐

ຄຸນ ຈິນທນາ ຣຸ່ງເຣືອງ Coe.....$ ໕໐.໐໐

ຄຸນ Michelle Ma ຈຸ້ນ .....$ ໑໐໐.໐໐

ແມ່ຊີປັທມາວດີ, ຄຸນກູຣິນທ, ຄຸນພຣິສຣ, ຄຸນພຣິມໄຣສ ວຣນິມມານ .....$໕໐.

ຄຸນຄົງສັກດິ໌,ຄຸນຜາສຸຂ,ຄຸນອາຣີຣັຕນ໌,ຄຸນຍຄສິຣິ,ຄຸນສິຣິວັລຄກິ່ມທະສມິຕ .....$໓໐

ຄຸນ ກັທຣພົລ ວໍຣນິມມານ - ຄຸນ Winnie Ho .....$໔໐.

ແມ່ຊີ ຕັກກັສສຣ ນິນທ໌ປະສິທສິ໌ ແລະຄອບຄົວ .....$໑໐.

ຄຸນ ວິມົລ ກອນຊາເລຊ ແລະ ຄອບຄົວ .....$໑໐.

ຄຸນ ມຕີນຸຊ ກັທຣສາດາ .....$໑໐.

ຄຸນ Judith Levin .....$໑໐.

ຄຸນ ນຸຊນາຣົຖ ພົງປ໌ຊນະ ແລະ ຄອບຄົວ .....$໑໐.

ຄຸນ ວິມລພັຣຕ ສຸຣັທສະ ແລະ ຄອບຄົວ .....$໑໐.

ຄຸນ ຈຸມພົຍ - ຄຸນສຸວລີຣ໌ ຈູຫະພົງສ໌ .....$໔໐.

ຄຸນ Praweerath Klaiputh .....$໑໐.

ຄຸນ Jenny Attavanich .....$໑໐.

ຄຸນ ບຸລເຣືອງ ເກຕຸພົງສ໌ສຸດາ ແລະ ຄອບຄົວ .....$໑໐.

ຄຸນ ອັລຊສາ ສທາວັฒນ໌ ແລະ ຄອບຄົວ .....$໑໐.

ຄຸນ ສົມ ໃຈ - ຄຸນສຸຊຸມ - ຄຸນສິທສະ - ຄຸນຣັຕນາ ອມຣຕຣະກູລ .....$໕໐.

ຄຸນ ກຄພົຣ ແສນວິເສษ .....$໑໐.

ຄຸນ ແອນໂທນີ່ ສອນບຸຕຣ໌ນາຄ .....$໑໐.

ຄຸຓ ພັฒนา ບຸญมີ ........................................................ $໑໐.

ພຕຕ ຫລີງ ກັທຣາພຣ ວົງບ໌ໄທຍ ........................................................ $໑໐.

ຄຸຓ ປະສິທສິ໌ - ຄຸຓ ສຸຣິຍາ ສຣະນາລາ ........................................................ $໑໐.

**ສັມມະທານ** ນັ່ນແຫລະຈຶ່ງປະເສີຖທີ່ສຸດ. ເພາະເຫຕຸນັ້ນ ພຣະສາສດາຈຶ່ງຕຣັສວ່າ "**ສພฺພທານํ ສມฺມທານํ ຊິນາຕິ.**" ມີກ່າວໄວ້ໃນ.....

.....ພຣະສຸຕຕັນຕປີຏົກ ຂຸທທກນິກາຍ ຄາຖາສັມພັນທ໌ ເຫຼັ້ມ ໑ ພາຄ ໔ ຕອນ ໔ ໜ້າທີ່ ໖໔໖ ເຫຼັ້ມ ໔໖

# ໑໐. ເຣື່ອງທ້າວສັກກເທວຣາຊ

[໔໔໙] ຂໍ້ຄວາມເບື້ອງຕົ້ນພຣະສາສດາ ເມື່ອປະທັບຢູ່ໃນພຣະເຊຕວັນ ຊົງປຣາຣົກທ້າວສັກກເທວຣາຊ ຕຣັສພຣະສັມມເທສນານີ້ວ່າ "**ສພฺພທານ**" ເປັນຕົ້ນ. ປັຍຫາ ໔ ຂໍ້ຂອງເທວດາຄວາມພິສດາຣວ່າ ໃນສມັຍນຶ່ງ ເທພດາໃນດາວດຶງສເທວໂລກປະຊຸມກັນແລ້ວ ຕັ້ງປັຍຫາຂຶ້ນ ໔ ຂໍ້ວ່າ "ບັຣດາທານທັ້ງຫລາຍ ທານຊນິດໃດເດ້?" ບັຕຫິຕກ່າວວ່າຢັ້ງມ, ບັຣດາຣສທັ້ງຫລາຍ ຣົສຊນິດໃດ? ບັຕຫິຕກ່າວວ່າຍອດ, ບັຣດາຄວາມຍິນດີທັ້ງຫລາຍ ຄວາມຍິນດີຊນິດໃດ? ບັຕຫິຕກ່າວວ່າເລີສ, ຄວາມສິ້ນໄປແຫ່ງຕັຕຫາແລ ບັຕຫິຕກ່າວວ່າປະເສີຖທີ່ສຸດ ເພາະເຫຕຸໃດ? ແມ້ເທພດາອົງຄ໌ນຶ່ງ ກໍບໍ່ສາມາຖຈະວິນິຈສັຍປັຍຫາເຫຼົ່ານັ້ນໄດ້. ກໍເທພດາອົງຄ໌ນຶ່ງ ຖາມກະເທພດາອົງຄ໌ນຶ່ງ, ແມ້ເທພດາອົງຄ໌ນັ້ນກໍຖາມເທພດາອົງຄ໌ອື່ນອີກ, ກໍເທພດາທັ້ງຫລາຍ ຖາມກັນແລະກັນຢ່າງນັ້ນ ດ້ວຍອາການຢ່າງນັ້ນ ໄດ້ທ່ອງທ່ຽວໄປໃນຫມື່ນຈັກຣວາລເຖິງ ໑໔ ປີ. ເທວດາພາກັນໄປຖາມປັຍຫາທ້າວມຫາຣາຊທັ້ງ ໔ ເທວດາໃນຫມື່ນຈັກຣວາລ ບໍ່ເຫັນເນື້ອຄວາມແຫ່ງປັຍຫາໂດຍກາລແມ້ມີປະມາຕເທົ່ານີ້ ປະຊຸມກັນແລ້ວ ໄປຍັງສຳນັກຂອງທ້າວມຫາຣາຊທັ້ງ ໔, ເມື່ອທ້າວມຫາຣາຊກ່າວວ່າ "ພໍ່ທັ້ງຫລາຍ ເປັນຫຍັງຈຶ່ງມີເທພສັນນິບາຕກັນໃຫຍ່?" ຈຶ່ງກ່າວວ່າ "ພວກຂນ້ອຍຕັ້ງປັຍຫາຂຶ້ນ ໔ ຂໍ້ແລ້ວ ເມື່ອບໍ່ສາມາຖຈະ

ວິນິຈສັຍໄດ້ຈຶ່ງມາຍັງສຳນັກຂອງທ່ານ, " ເມື່ອທ້າວມຫາຣາຊກ່າວວ່າ "ຊື່ປັລຫາອີຫຍັງກັນ? ພໍ່" (ຈຶ່ງບອກເນື້ອຄວາມນັ້ນ) ວ່າ "ພວກຂນ້ອຍບໍ່ສາມາຖວິນິຈສັຍປັລຫາ

.....ພຣະສຸຕຕັນຕປິຏົກ ຂຸທທກນິກາຍ ຄາຖາສັມມ໌ປົທ ເຫຼັ້ມ ໑ ພາຄ ໔ ຕອນ ໔ ຫນ້າທີ່ ໓໔໔ ເຫຼັ້ມ ໔໓

ເຫຼົ່ານີ້ໄດ້ ຄື ' ບັຣດາທານ ຣົສ ແລະຄວາມຍິນດີ ທານ ຣົສ ແລະຄວາມຍິນດີຊນິດໃດເດ້ ປະເສີຖສຸດ? ຄວາມສິ້ນໄປແຫ່ງຕັຓຫາໃດ ປະເສີຖສຸດ ເພາະເຫຕຸໃດ?" ຈຶ່ງມາຫາທ້າວມຫາຣາຊທັ້ງ ໔ ກ່າວວ່າ "ພໍ່ທັ້ງຫລາຍ ແມ້ພວກເຮົາກໍຫາຮູ້ເນື້ອຄວາມແຫ່ງປັລຫາເຫຼົ່ານີ້ບໍ່; ແຕ່ພຣະຣາຊາຂອງພວກເຮົາ ຊົງດຳຣິອັຖທີ່ຊົນຕັ້ງພັນຄືດແລ້ວຍ່ອມຊົງຮູ້ໂດຍຂຓະດຽວເທົ່ານັ້ນ, ພຣະອົງຄ໌ປະເສີຖວິເສຫກວ່າພວກເຮົາທັ້ງຫລາຍ ທັ້ງທາງປັລຍາແລະທາງບຸຍ, ພວກເຮົາຈົງໄປຍັງສຳນັກຂອງພຣະອົງຄ໌ຖ້ອນ" ແລ້ວພາຫມູ່ເທພດານັ້ນນັ່ນແລໄປຍັງສຳນັກຂອງທ້າວສັກກເທວຣາຊ, ເຖິງເມື່ອທ້າວສັກກເທວຣາຊນັ້ນຕຣັສວ່າ "ພໍ່ທັ້ງຫລາຍ ເປັນຫຍັງຈຶ່ງມີເທພສັນນິບາຕກັນໃຫລ່? " ກໍກຣາບທູລເນື້ອຄວາມນັ້ນ.

## ທ້າວສັກກະຊົງພາພວກເທວດາໄປເຝົ້າພຣະສາສດາ

ທ້າວສັກກະຕຣັສວ່າ "ພໍ່ທັ້ງຫລາຍ ຄົນອື່ນຍ່ອມບໍ່ສາມາຖຮູ້ເນື້ອຄວາມແຫ່ງປັລຫາເຫຼົ່ານີ້ໄດ້, ປັລຫາເຫຼົ່ານັ່ນ ເປັນວິສັຍຂອງພຣະພຸທສເຈົ້າ, ແລ້ວຕຣັສຖາມວ່າ "ກໍເດີ໋ຍວນີ້ ພຣະສາສດາປະທັບຢູ່ ບ່ອນໃດ? " ຊົງສດັບວ່າ "ໃນພຣະເຊຕວັນວິຫາຣ" ຈຶ່ງຕຣັສວ່າ "ພວກທ່ານມາຖ້ອນ, ພວກເຮົາຈັກໄປຍັງສຳນັກຂອງພຣະອົງຄ໌" ຊົງພ້ອມດ້ວຍຫມູ່ເທພດາ ໃຫ້ພຣະເຊຕວັນທັ້ງສິ້ນສວ່າງໄສວໃນສ່ວນແຫ່ງຣາຕຣີ ເຂົ້າໄປເຝົ້າພຣະສາສດາ ຖວາຍບັງຄົມແລ້ວ ປະທັບຍືນຢູ່ ທີ່ ສ່ວນຂ້າງນຶ່ງ, ເມື່ອພຣະສາສດາຕຣັສວ່າ "ມຫາບໍພິຕຣ໌ ເປັນຫຍັງພຣະອົງຄ໌ຈຶ່ງສເດັຈມາພ້ອມກັບຫມູ່ເທພດາຫຼວງຫຼາຍ?"

ຈຶ່ງກາຣາບທູລວ່າ "ພຣະເຈົ້າຂ້ານ້ອຍ ຫມູ່ເທພດາພາກັນຕັ້ງປັຍຫາຊື່ເຫຼົ່ານີ້, ຄົນອື່ນທີ່ຊື່ວ່າສາມາຖຮູ້ເນື້ອຄວາມແຫ່ງປັຍຫາເຫຼົ່ານີ້ໄດ້ ຫາມີບໍ່, ຂໍພຣະອົງຄ໌ໄດ້ຊົງປະກາຊເນື້ອຄວາມແຫ່ງປັຍຫາເຫຼົ່ານີ້ ແກ່ພວກຂ້າພຣະອົງຄ໌ຖ້ອນ."

ພຣະສຸຕຕັນຕປີຜົກ ຂຸທທກນິກາຍ ຄາຖາທັມມ໌ບົທ ເຫຼັ້ມ ໑ ພາຄ ໔ ຕອນ ໔ - ຫນ້າທີ່ ລ໑໔໕

ພຣະສາສດາຊົງແກ້ປັຍຫາ ພຣະສາສດາຕຣັສວ່າ "ດີລະ ມຫາບໍພິຕຣ໌ **ຕຖາຄົຕບໍາເພັຍບາຣມີ ລ໐ ທັສ** *ບໍຣິຈາຄມຫາບໍຣິຈາຄ*[1] ແທງຕລອດພຣະສັພພັຍຍຸຕຍານແລ້ວ ກໍເພື່ອຕັດຄວາມສົງສັຍຂອງຊົນຜູ້ເຊັ່ນພຣະອົງຄ໌ນີ້ແຫລະ, ຂໍພຣະອົງຄ໌ຈົ່ງຊົງສດັບປັຍຫາທີ່ພຣະອົງຄ໌ຖາມແລ້ວຖ້ອນ: ບັຣດາ **ທານທຸກຊນິດ ສັມມະທານເປັນຢັ້ງມ**, ບັຣດາ **ຣົສທຸກຊນິດ ຣົສແຫ່ງພຣະສັມມ໌ເປັນຍອດ**, ບັຣດາ**ຄວາມຍິນດີທຸກຊນິດ ຄວາມຍິນດີໃນສັມມ໌ປະເສີຖ, ສ່ວນຄວາມສິ້ນໄປແຫ່ງຕັຕຫາປະເສີຖທີ່ສຸດແທ້** ເພາະຄວາມເປັນເຫຕຸໃຫ້ສັຕວ໌ບັຣລຸພຣະອຣຫັຕ" ດັ່ງນີ້ແລ້ວ ຕຣັສພຣະຄາຖາ ນີ້ວ່າ :

**ສພຸພທານໍ ສມຸມທານໍ ຊິນາຕິ ສພຸພໍ ຣສໍ ສມຸມຣໂສ ຊິນາຕິ ສພຸພໍ ຣຕື ສມຸມຣຕິ ຊິນາຕິ ຕຓຸຫກຸຂໂຍ ສພຸພທຸກຸຂໍ ຊນາຕິ.** "ສັມມະທານ ຍ່ອມຊນະທານທັ້ງປວງ, ຣົສແຫ່ງສັມມ໌ ຍ່ອມຊນະຣົສທັ້ງປວງ, ຄວາມຍິນດີໃນສັມມ໌ ຍ່ອມຊນະຄວາມຍິນດີທັ້ງປວງ, ຄວາມສິ້ນໄປແຫ່ງຕັຕຫາ ຍ່ອມຊນະທຸກຂ໌ທັ້ງປວງ."

ແກ້ອັຖ ບັຣດາບົທເຫຼົ່ານັ້ນ ບົທວ່າ **ສພຸພທານໍ** ເປັນຕົ້ນ ຄວາມວ່າ ກໍຖ້າບຸຄຄົລເຖິງຖວາຍໄຕຣຈີວຣເຊັ່ນກັບໃບຕອງອ່ອນ ແດ່ພຣະພຸທສເຈົ້າ ພຣະປັຈເຈກພຸທສເຈົ້າ ແລະພຣະຂີຕາສົພທັ້ງຫລາຍ ຜູ້ນັ່ງຕິດ ໆ ກັນ ໃນຫ້ອງຈັກຣວາລຕລອດ

**໑. ຫມາຍເຖິງບໍຣິຈາຄ ໕ ຄື :**

໑. ອງຄປຣິຈຸຈາຄ ບໍຣິຈາຄອວັຍວະ. ໒. ສນປຣິຈາຄ ບໍຣິຈາຄຊັພຍ໌.
໓. ປຸຕຸຕປຣິຈຸຈາຄ ບໍຣິຈາຄບຸຕຣ໌. ໔. ທາຣປຣິຈຸຈາຄ ບໍຣິຈາຄເມັຽ
໕. ຊີວິຕປຣິຈຸຈາຄ ບໍຣິຈາຄຊີວິຕ.

ພຣະສຸຕຕັນຕປີຝົກ ຂຸທທກນິກາຍ ຄາຖາທັມມ໌ບົທ ເຫຼັ້ມ ໑ ພາຄ ໔ ຕອນ ໔ - ໜ້າທີ່ ໓໔໕

ເຖີງພຣິຫານໂລກ. ກາຣອນຸໂມທນານັ້ນລະ ທີ່ພຣະພຸທສເຈົ້າເປັນຕົ້ນຊົງເຮັດດ້ວຍພຣະຄາຖາ ໔ ບາທໃນສມາຄົມນັ້ນປະເສີຖ; ກໍທານນັ້ນທານີຄ່າເຖີງສ່ວນ ທີ່ ໑໕ ແຫ່ງພຣະຄາຖານັ້ນ ຄື: **ກາຣສແດງກໍດີ ກາຣກ່າວສອນກໍດີ ກາຣສດັບກໍດີຊຶ່ງທັມມ໌ ເປັນຂອງໃຫຍ່ດ້ວຍປະກາຣລະນີ້. ອີກຢ່າງນຶ່ງ ບຸຄຄົລໃດໃຫ້ທຳກາຣຟັງທັມມ໌, ອານິສົງສ໌ເປັນອັນມາກກໍຍ່ອມມີແກ່ບຸຄຄົລນັ້ນແທ້.** ສັມມະທານນັ່ນແຫລະ ທີ່ພຣະພຸທສເຈົ້າເປັນຕົ້ນໃຫ້ເປັນໄປແລ້ວ ແມ້ດ້ວຍອຳນາຈອນຸໂມທນາ ໂດຍທີ່ສຸດດ້ວຍພຣະຄາຖາ ໔ ບາທ ປະເສີຖທີ່ສຸດກວ່າທານທີ່ທາຍົກບັຣຈຸບາຕຣ໌ໃຫ້ເຕັມດ້ວຍບິຕຫບາຕອັນປະຕີຕແລ້ວ ຖວາຍແກ່ບໍຣິບັທເທັນປານນັ້ນນັ່ນແຫລະກໍດີ ກວ່າເພສັຊທານທີ່ທາຍົກບັຣຈຸບາຕຣ໌ໃຫ້ເຕັມດ້ວຍເນຍໃສແລະນ້ຳມັນເປັນຕົ້ນ ແລ້ວຖວາຍກໍດີ ກວ່າເສນາສນທານທີ່ທາຍົກໃຫ້ສ້າງວິຫາຣເຊັ່ນກັບມຫາວິຫາຣ ແລະປຣາສາທເຊັ່ນກັບໂລຫປຣາສາທຕັ້ງຫລາຍແສນແລ້ວຖວາຍກໍດີ ກວ່າກາຣບໍຣິຈາຄທີ່ອນາຖບິຕຫິກເສຍກີເປັນຕົ້ນປຣາຣົກວິຫາຣທັ້ງຫລາຍແລ້ວທຳກໍດີ.
ເພາະເຫຕຸໃດ? **ເພາະວ່າຊົນທັ້ງຫລາຍ ເມື່ອຈະເຮັດບຸລເທັນປານນັ້ນ ຕໍ່ຟັງທັມມ໌ແລ້ວເທົ່ານັ້ນຈຶ່ງເຮັດໄດ້. ບໍ່ໄດ້ຟັງ ກໍທາເຮັດໄດ້;** ກໍຖ້າວ່າສັຕວ໌ເຫຼົ່ານີ້ບໍ່ຄວຣຟັງທັມມ໌ໄຊຣ້, ເຂົາກໍບໍ່ຄວຣຖວາຍເຂົ້າຍາຄູປະມາຕກະບວຍນຶ່ງກໍດີ ທັຕປະມາຕທັພພີນຶ່ງກໍດີ; **ເພາະເຫຕຸນີ້ ສັມມະທານນັ່ນແຫລະ ຈຶ່ງປະເສີຖ ທີ່ສຸດກວ່າທານທຸກຊນິດ.** ອີກຢ່າງນຶ່ງ ເວັ້ນພຣະພຸທສເຈົ້າ ແລະພຣະປັຈເຈກພຸທສເຈົ້າເສັຽ ແມ້ພຣະສາວົກທັ້ງຫລາຍມີພຣະສາຣີບຸຕຣ໌ເປັນຕົ້ນ ຜູ້ປະກອບດ້ວຍປັລລາ ຊຶ່ງສາມາຖນັບທຍາດນ້ຳໄດ້

ໃນເມື່ອຝົນຕົກຕລອດກັລປ໌ທັ້ງສິ້ນ ກໍຍັງບໍ່ສາມາຖຈະບັຣລຸໂສດາປັຕຕິຜົລເປັນຕົ້ນ ໂດຍສັມມະດາຂອງຕົນໄດ້; ຕໍ່ຟັງສັມມ໌ທີ່ພຣະອັສສຊິ ເຖຣະເປັນຕົ້ນສແດງແລ້ວ ຈຶ່ງເຮັດໃຫ້ແຈ້ງຊຶ່ງໂສດາປັຕຕິຜົລ, ແລະເຮັດໃຫ້ແຈ້ງຊຶ່ງ

ພຣະສຸຕຕັນຕປິຝົກ ຂຸທທກນິກາຍ ຄາຖາສັມມ໌ບົທ ເຫຼັ້ມ ໑ ພາຄ ໔ ຕອນ ໔ - ຫນ້າທີ່ ໖໔໗

ສາວົກບາຣມີຍານ ດ້ວຍພຣະສັມມເທສນາຂອງພຣະສາສດາ; ເພາະເຫຕຸແມ້ນີ້ ມຫາບໍພິຕຣ໌[1] ສັມມະທານນັ່ນແຫລະຈຶ່ງປະເສີຖທີ່ສຸດ. ເພາະເຫຕຸນັ້ນ ພຣະສາສດາຈຶ່ງຕຣັສວ່າ "**ສພຸພທານໍ ສມຸມທານໍ ຊິນາຕິ.**" ອີກຢ່າງນຶ່ງ ຣົສມີຣົສເກີດແຕ່ລຳຕົ້ນເປັນຕົ້ນທຸກຊນິດ ໂດຍສ່ວນສູງແມ້ຣົສແຫ່ງ ສຸຊາໂພຊນ໌ຂອງເທພດາທັ້ງຫລາຍ ຍ່ອມເປັນປັຈຈັຍແຫ່ງການຍັ່ງສັຕວ໌ໃຫ້ຕົກໄປໃນສັງສາຣວັຝ ແລ້ວສເວີຍທຸກຂ໌ໂດຍແທ້. ສ່ວນພຣະສັມມ໌ຣົສກ່າວຄື **ໂພທິປັກຂິຍສັມມ໌ ໓໗ ປະການ** ແລະກ່າວຄືໂລກຸຕຣສັມມ໌ ໙ ປະການນີ້ແຫລະປະເສີຖກວ່າຣົສທັ້ງປວງ. ເພາະເຫຕຸນັ້ນ ພຣະສາສດາຈຶ່ງຕຣັສວ່າ "**ສພຸພຣສໍ ສມຸມຣໂສ ຊິນາຕິ.**" ອີກຢ່າງນຶ່ງ ແມ້ຄວາມຍິນດີໃນບຸຕຣ໌ ຄວາມຍິນດີໃນທິດາ ຄວາມຍິນດີໃນຊັພຍ໌ ຄວາມຍິນດີໃນສຕຣີ ແລະຄວາມຍິນດີມີປະເພທບໍ່ແມ່ນຢ່າງດຽວອັນຕ່າງດ້ວຍຄວາມຍິນດີໃນການຟ້ອນການຂັບການປະໂຄມເປັນຕົ້ນ ຍ່ອມເປັນປັຈຈັຍແຫ່ງການຍັງສັຕວ໌ໃຫ້ຕົກໄປໃນສັງສາຣວັຝ ແລ້ວສເວີຍທຸກຂ໌ໂດຍແທ້; **ສ່ວນຄວາມອີ່ມໃຈຊຶ່ງເກີດຂຶ້ນ ທີ່ ພາຍໃນຂອງຜູ້ສແດງກໍດີ ຜູ້ຟັງກໍດີ ຜູ້ກ່າວສອນກໍດີ ຊຶ່ງສັມມ໌ ຍ່ອມໃຫ້ເກີດຄວາມເບີກບານໃຈ ໃຫ້ນ້ຳຕາໄຫລ ໃຫ້ເກີດຂົນຊູຊັນ ຄວາມອີ່ມໃຈນັ້ນ ຍ່ອມທຳທີ່ສຸດແຫ່ງສັງສາຣວັຝ** ມີພຣະອຣຫັຕເປັນປຣິໂຍສານ; ຄວາມຍິນດີໃນສັມມ໌ ເຫັນປານນີ້ແຫລະ ປະເສີຖກວ່າຄວາມຍິນດີທັ້ງປວງ. ເພາະເຫຕຸນັ້ນ ພຣະສາສດາຈຶ່ງຕຣັສວ່າ "**ສພຸພຣຕີ ສມຸມຣຕິ ຊິນາຕິ.**" ສ່ວນຄວາມສິ້ນໄປແຫ່ງຕັຕຫາ ຄືພຣະອຣຫັຕຊຶ່ງເກີດຂຶ້ນໃນທີ່ສຸດແຫ່ງ

໑. ນ່າຈະເປັນບົທເກີນ, ເພາະໃຜບໍ່ສາມາຖທຳເນື້ອຄວາມເຊັ່ນນີ້ ໃຫ້ພຣະດຳຣັສຂອງພຣະສາສດາໄດ້.

ພຣະສຸຕຕັນຕປິຜົກ ຂຸທທກນິກາຍ ຄາຖາສັນມ໌ບົທ ເຫຼັ້ມ ໑ ກາຄ ໘ ຕອນ ໔ - ຫນ້າທີ່ ລ໔ກ

ຄວາມສິ້ນໄປແຫ່ງຕັຕຫາ, ພຣະອຣຫັຕນັ້ນ ປະເສີຖກວ່າທຸກຢ່າງແທ້ ເພາະຄອບງຳວັຜທຸກຂ໌ແມ້ທັ້ງສິ້ນ. ເພາະເຫຕຸນັ້ນ ພຣະສາສດາຈຶ່ງຕຣັສວ່າ "**ຕຕຸຫາກຸຂໂຍ ສພຸພທຸກຸຂໍ ຊິນາຕິ.**" ເມື່ອພຣະສາສດາຕຣັສເນື້ອຄວາມແຫ່ງພຣະຄາຖານີ້ ດ້ວຍປະການ ຈະນີ້ຢູ່ນັ່ນແລ ສັມມາກິສມັຍໄດ້ມີແກ່ສັຕວ໌ ກ ຫມື່ນ ໔ ພັນແລ້ວ. ແມ້ທ້າວສັກກະຊົງ ສດັບສັມມກາຖາຂອງພຣະສາສດາ ຖວາຍບັງຄມພຣະສາສດາແລ້ວ ທູລວ່າ ພຣະເຈົ້າ ຂ້ານ້ອຍ ເພື່ອປະໂຍຊນ໌ຫຍັງ ພຣະອົງຄ໌ຈຶ່ງບໍ່ຮັບສັ່ງໃຫ້ ໃຫ້ສ່ວນບຸຄແກ່ພວກຂ້າ ພຣະອົງຄ໌ ໃນສັນມະທານອັນຊື່ວ່າຢັ່ງມຢ່າງນີ້? ຈຳເດີມແຕ່ນີ້ໄປ ຂໍພຣະອົງຄ໌ໄດ້ ໂຜດຕຣັສບອກແກ່ກິກຂຸສົງຂ໌ແລ້ວຮັບສັ່ງໃຫ້ ໆ ສ່ວນບຸຄແກ່ພວກຂ້າພຣະອົງຄ໌ຖ້ອນ ຂ້ານ້ອຍ. "**ພຣະສາສດາຊົງສດັບຄຳຂອງທ້າວທ່ານແລ້ວ ຮັບສັ່ງໃຫ້ກິກຂຸສົງຂ໌ປະຊຸມກັນແລ້ວຕຣັສວ່າ**" ກິກຂຸທັ້ງຫລາຍ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ພວກທ່ານທຳການຟັງສັນມ໌ໃຫຍ່ກໍດີ ການຟັງສັນມ໌ຕາມປົກຕິກໍດີ ກ່າວອຸປນິສິນນກຖາ ກໍດີ ໂດຍທີ່ສຸດແມ້ການອນຸໂມທນາແລ້ວ ຄວຣໃຫ້ສ່ວນບຸຄແກ່ສັຕວ໌ທັ້ງປວງ."

ເຣື່ອງທ້າວສັກກເທວຣາຊ ຈົບ



พระพุทธองค์ຊົງຕรັส **"ການເກີດເປັນເຫດແຫ່ງກອງທຸກຂ໌ທັ້ງມວລ"**

**...ເຫຼົ່າສັດທີ່ມີອຳນາຈແຫ່ງບຸນສົ່ງເສີມ ໄປແລ້ວສູ່ກາມภพ ແລະ ຮູປภพ ຫຼືແມ້ໄປສູ່ກວັດຄພຣິທານ ຍ່ອມກລັບສູ່ທຸຄຕິອີກໄດ້** *ເຫຼົ່າສັດ ມີອາຍຸຍືນເຖິງພຽງນັ້ນ ກໍຍັງຈຸຕິເພາະສິ້ນອາຍຸ ภพ ໃດໆ ຊື່ວ່າ***ທ່ຽງ ບໍ່ມີ ສົມເດັຈພຣະສັມມາສັມພຸທສເຈົ້າ ຜູ້ແສວງຫາຄຸນອັນຍິ່ງໃຫຍ່ ໄດ້ຕຣັສ**

.......พระອັງຄຸຕຕະຣະນິກາຍ ວິภັງຄ໌ ເຫຼັ້ມ ໔ ภาຄ ໔ - ຫນ້າທີ່ ໑໐໐໕

**ໄວ້ຢ່າງນີ້** *ເພາະສະນັ້ນແລ ເຫຼົ່ານັກປຣາຊຍ໌ຜູ້ມີປັນຍາເຈລີຍວສລາດ ຮອບຄອບ ຄຳນຶງເຖິງຄວາມຈິງຂໍ້ນີ້ ຈຶ່ງ***ຈເຣີນມັຄຄ໌ອັນອຸດມເພື່ອພົ້ນຈາກ ອຸຣານໍຣຕະ ເພື່ອ***ຈເຣີນມັຄຄ໌ອັນບໍຣິສຸທສິ໌ສະອາດ ຊຶ່ງມີປົກຕິຍັງສັດໃຫ້ ຫຍັ່ງເຖິງພຣະນິພພານແລ້ວ ຍ່ອມເປັນຜູ້ບໍ່ມີອາສວະປຣິນິພພານ ເພາະ ກຳຫນົດຮູ້ອາສວະທັ້ງປວງລະນີ້ແລ.*

*"ຫັນທະທານິ ภิກຂະເວ ອາມັນຕະຢາມິ ໂວ ວະຍະທັມມາ ສັງຂາຣາ ອັປປມາເທນະ ສັມປາເທຖະ"*

*"ດູກ່ອນภิກษุທັ້ງຫລາຍ ອັນວ່າສັງຂາຣທັ້ງຫລາຍ ຍ່ອມມີຄວາມເສື່ອມສລາຍໄປ ເປັນສັມມະດາ ທ່ານທັ້ງຫລາຍຈົງຍັງກິຈທັ້ງປວງອັນເປັນປະໂຍຊນ໌ຂອງຕົນ ແລະປະ ໂຍຊນ໌ຂອງຜູ້ອື່ນໃຫ້ບໍຣິບູຣຕ໌ດ້ວຍຄວາມບໍ່ປະມາທເຖີດ"*